

# 활동 ກິດຈະກຳ

가족에 대해서 〈보기〉처럼 이야기해 보세요.
ລອງເວົ້າກ່ຽວກັບຄອບຄົວ ຄືດັ່ງຕົວຢ່າງ.

보기 ຕົວຢ່າງ

가: 가족이 몇 명이에요? ຄອບຄົວຂອງເຈົ້າມີຈັກຄົນ?

나: 아버지, 어머니, 저, 세 명이에요. ພໍ່, ແມ່ ແລະ ຂ້ອຍ. 3 ຄົນ.

가: 아버지는 어디에 살아요? ພໍ່ອາໃສຢູ່ໃສ?

나: 베트남에 살아요. ອາໃສຢູ່ຫວຽດນາມ.

가: 연세가 어떻게 되세요? ອາຍຸຈັກປີ?

나: 일흔 살이세요. 70 ປີ.



ຄອບຄົວຂອງເຈົ້າມີຈັກຄົນ? ທັງໝົດອາໃສຢູ່ໃສ? ແລະ ພໍ່ແມ່ຂອງເຈົ້າອາຍຸເທົ່າໃດ?

## 퀴즈 ຄຳທວາຍ

✚ 알맞은 말에 ✔하세요. ຈົ່ງຕື່ມເຄື່ອງໝາຍ ✔ ໃສ່ຄຳເວົ້າທີ່ເໝາະສົມ.

(1) 가족이 모두 ☐ 세 명이에요. ☐ 네 명이에요.

(2) 아버지는 ☐ 베트남에 ☐ 필리핀에 살아요.

(3) 아버지 연세는 ☐ 60살이세요. ☐ 70살이세요.

정답 (1) 세 명이에요. (2) 베트남에 (3) 70살이세요.



## 문화 ວັດທະນະທຳ

# 높임말과 반말

ຄຳເວົ້າຊັ້ນສູງ (ຄຳເວົ້າທີ່ໃຫ້ກຽດ) ແລະ ຄຳເວົ້າທຳມະດາ

| 높임말 ຄຳເວົ້າຊັ້ນສູງ (ຄຳເວົ້າທີ່ໃຫ້ກຽດ) | 반말 ຄຳເວົ້າທຳມະດາ |
|---|---|
| 어디 가세요? | 어디 가? |
| 고마워요. | 고 마 워. |

한국어에는 높임말과 반말이 있습니다. 보통 자신보다 나이가 많은 사람에게는 높임말을 사용합니다. 그리고 자신보다 나이가 어린 사람에게는 반말을 사용합니다. 하지만 자신보다 나이가 어려도 처음 만난 사람이나 별로 가깝지 않은 사람에게는 높임말을 사용하는 것이 좋습니다. 한편 자신보다 나이가 많아도 아주 가까운 사람에게는 반말을 사용하기도 합니다.

ໃນພາສາເກົາຫຼີມີ ຄຳເວົ້າທີ່ໃຫ້ກຽດ ແລະ ຄຳເວົ້າທຳມະດາ. ໂດຍທົ່ວໄປ ເວລາເວົ້າກັບຜູ້ທີ່ມີອາຍຸຫຼາຍກ່ວາ ແມ່ນໃຊ້ຄຳເວົ້າທີ່ສຸພາບ ແລະ ໃນເວລາທີ່ເວົ້າກັບຜູ້ທີ່ມອາຍຸນ້ອຍກ່ວານັ້ນ ແມ່ນໃຊ້ຄຳເວົ້າທຳມະດາ. ແຕ່ວ່າ, ເຖິງວ່າຈະແມ່ນຄົນທີ່ອາຍຸນ້ອຍກ່ວາ ແຕ່ຫາກໍພົບກັນຄັ້ງທຳອິດ ການໃຊ້ຄຳເວົ້າທີ່ສຸພາບ ແມ່ນເປັນການດີກ່ວາ. ໃນອີກດ້ານໜຶ່ງ, ເຖິງວ່າຈະແມ່ນຜູ້ທີ່ມີອາຍຸຫຼາຍກ່ວາແຕ່ເປັນຄົນທີ່ໃກ້ຊິດສະໜິດສະໜົມ ເຮົາສາມາດໃຊ້ ຄຳເວົ້າທຳມະດານຳໄດ້ຄືກັນ.

| 높임말 ຄຳເວົ້າສຸພາບ | 반말 ຄຳເວົ້າທຳມະດາ | 의미 ຄວາມໝາຍ |
|---|---|---|
| 네/예 | 응 | ເຈົ້າ |
| 아니요 | 아니 | ບໍ່ |
| 고마워요 | 고마워 | ຂອບໃຈ (ຄຳເວົ້າສຸພາບ) ຂອບໃຈ (ຄຳເວົ້າທຳມະດາ) |
| 미안해요 | 미안해 | ຂໍໂທດ (ຄຳເວົ້າທີ່ໃຫ້ກຽດ) ຂໍໂທດ (ຄຳເວົ້າທຳມະດາ) |
| 있어요 | 있어 | ມີ (ຄຳເວົ້າສຸພາບ) ມີ (ຄຳເວົ້າທຳມະດາ) |
| 먹어요 | 먹어 | ຮັບປະທານ (ຄຳເວົ້າສຸພາບ) ກິນ(ຄຳເວົ້າທຳມະດາ) |
| 자요 | 자 | ນອນ (ຄຳເວົ້າສຸພາບ) ນອນ (ຄຳເວົ້າທຳມະດາ) |

### 내용 확인 ກວດຄືນເນື້ອໃນ

✚ 빈칸에 알맞은 말을 쓰세요. ຈົ່ງຂຽນຄຳເວົ້າທີ່ເໝາະສົມ ໃສ່ບ່ອນຫວ່າງ.

(1) 한국어는 높임말하고 ☐☐이 있습니다. ໃນພາສາເກົາຫຼີມີທັງຄຳເວົ້າທີ່ສຸພາບ ແລະ ☐☐ (ຄຳເວົ້າທຳມະດາ).

(2) '네/예'의 반말은 '☐'입니다. ຄຳເວົ້າທຳມະດາຂອງ '네/예' ແມ່ນ ☐.

(3) '미안해'의 높임말은 '☐☐☐☐'입니다. ຄຳເວົ້າທີ່ໃຫ້ກຽດຂອງ '미안해' ແມ່ນ ☐☐☐☐.

정답 (1) 반말 (2) 응 (3) 미안해요



# EPS-TOPIK 듣기 ພາກຟັງ **EPS-TOPIK**



ຄຳຖາມຂໍ້ທີ 1 ແລະ 2 ແມ່ນກ່ຽວກັບການເລືອກຈຳນວນຄົນວ່າມີທັງໝົດຈັກຄົນ. ແລະ ຄຳຖາມ ຂໍ້ທີ 3 ຟັງກ່ຽວກັບອາຍຸ ແລ້ວເລືອກຄຳຕອບທີ່ຖືກຕ້ອງ. ຈົ່ງຟັງໃຫ້ດີ ແລ້ວເລືອກຮູບພາບ ຫຼື ຄຳສັບທີ່ຖືກຕ້ອງ.

[1~3] 잘 듣고 내용과 관계있는 그림을 고르십시오.

Track 33

ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເລືອກເອົາຮູບທີ່ກ່ຽວຂ້ອງກັບເນື້ອໃນນັ້ນ.

1. ① ② ③ ④

2. ① ② ③ ④

3. ① 12살 ② 22살 ③ 32살 ④ 42살



ຕໍ່ໄປ ເປັນຄຳຖາມກ່ຽວກັບ ການເລືອກເອົາຄຳຕອບທີ່ຖືກຕ້ອງ. ຈົ່ງລອງກວດເບິ່ງເນື້ອໃນຂອງຄຳຕອບເທື່ອໜຶ່ງ ກ່ອນທີ່ຈະຟັງບົດສົນທະນາ.

[4~5] 질문을 듣고 알맞은 대답을 고르십시오.

ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

4. ① 가족이에요. ② 네 명이에요.
③ 가족이 있어요. ④ 한국에 살아요.

5. ① 학교에 가요. ② 동생이 있어요.
③ 학교에 있어요. ④ 제 동생이에요.



### 듣기 대본 ເນື້ອໃນບົດຟັງ

1. 남: 네 명4 ຄົນ
2. 여: 다섯 명5 ຄົນ
3. 남: 스물두 살ອາຍຸ 22 ປີ
4. 여: 가족이 몇 명이에요?ຄອບຄົວຂອງເຈົ້າມີຈັກຄົນ?
5. 남: 동생은 어디에 있어요?ນ້ອງຂອງເຈົ້າອາໃສຢູ່ໃສ?

정답 1. ④ 2. ① 3. ② 4. ② 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ




1. 잘 듣고 내용과 관계있는 것을 고르십시오. ຈົ່ງຟັງໃຫ້ດີ ແລ້ວເລືອກເອົາຄຳຕອບ ທີ່ມີເນື້ອໃນກ່ຽວຂ້ອງກັບບົດຟັງ.

   ① 10살 ② 20살 ③ 30살 ④ 40살

2. 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

   ① 학생이에요. ② 2명 있어요.
   ③ 회사에 가요. ④ 한국에서 일해요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 저는 스무 살이에요. ຂ້ອຍອາຍຸ 20 ປີ.
2. 남: 동생이 몇 명이에요? ນ້ອງຂອງເຈົ້າມີຈັກຄົນ?

정답 1. ② 2. ②

### 유용한 표현 ສຳນວນທີ່ສຳຄັນ

**이따가 전화 드릴게요.** ອີກຈັກໜ້ອຍ ແລ້ວຂ້ອຍຈະໂທຫາ.

가: 여보세요? 리한 씨 바빠요? ສະບາຍດີ. ຣີຮັນ ຄາວຽກບໍ?
나: 네, 좀 바빠요. **이따가 전화 드릴게요.** ເຈົ້າ, ຄາວຽກໜ້ອຍໜຶ່ງ. ອີກຈັກໜ້ອຍ ຈະໂທຫາເດີ.



## EPS-TOPIK 읽기 ພາກອ່ານ EPS-TOPIK



ຄຳຖາມຂໍ້ 1 ແມ່ນເປັນຄຳຖາມກ່ຽວກັບການເບິ່ງຮູບຄອບຄົວ ແລ້ວຫາສຳນວນທີ່ສອດຄ່ອງ ກັບຮູບພາບ. ຄຳຖາມ ຂໍ້ 2 ຫາ 3 ແມ່ນໃຫ້ຊອກຫາສຳນວນທີ່ສະແດງເຖິງຮູບຮ່າງ. ຈົ່ງເລືອກປະໂຫຍກທີ່ຖືກຕ້ອງໃນຮູບພາບ.

**[1~3] 다음 그림을 보고 맞는 문장을 고르십시오.**

ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1. 

① 동생이 많아요. ② 아버지가 없어요.
③ 할머니가 있어요. ④ 가족이 세 명이에요.

2. 


① 누나는 키가 커요. ② 누나는 회사에 가요.
③ 누나는 한국에 살아요. ④ 누나하고 형이 있어요.

3. 


① 여동생이 없어요. ② 여동생이 예뻐요.
③ 여동생이 집에 없어요. ④ 여동생이 두 명이에요.



ລອງຄິດທົບທວນເຖິງສິ່ງທີ່ຮຽນຜ່ານມາ ແລ້ວຕອບຄຳຖາມ. ຄຳຖາມຂໍ້ 4 ແມ່ນຄຳຖາມກ່ຽວກັບ ຄຳສັບ. ສ່ວນ ຂໍ້ 5 ແມ່ນຄຳຖາມກ່ຽວກັບໄວຍາກອນ.

**[4~5] 빈칸에 들어갈 가장 알맞은 것을 고르십시오.**

ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

4.
가: 여동생이 있어요? ເຈົ້າມີນ້ອງສາວບໍ?
나: 아니요, ______________. ບໍ່, ບໍ່ມີ.

① 예뻐요 ② 작아요 ③ 없어요 ④ 있어요

5.
가: 가족이 어디에 살아요? ຄອບຄົວຂອງເຈົ້າອາໃສຢູ່ໃສ?
나: 아버지 ______________ 어머니는 필리핀에 살아요. ພໍ່ ແລະ ແມ່ ອາໃສຢູ່ ຟີລິບປິນ.

① 가 ② 에 ③에서 ④ 하고

정답 1. ④ 2. ① 3. ② 4. ③ 5. ④



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກ ທີ່ຖືກຕ້ອງ.

1. 

① 제 친구는 키가 커요. ② 제 친구는 조금 뚱뚱해요.
③ 제 친구는 키가 작아요. ④ 제 친구는 정말 똑똑해요.

2. 

① 동생은 얌전해요. ② 동생은 친절해요.
③ 동생은 재미있어요. ④ 동생은 부지런해요.

[3~4] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.

가: 아버지는 ____________? ພໍ່ຂອງເຈົ້າ ມີອາຍຸຈັກປີ?
나: 일흔 살이세요. ອາຍຸ 70 ປີ.

① 어디에 살아요? ② 지금 뭐 하세요?
③ 가족이 몇 명이에요? ④ 연세가 어떻게 되세요?

4.

투안 씨는 매우 ____________ 사람입니다. 항상 일찍 출근해서 업무를 준비하고, 근무 시간에도 열심히 일합니다.

ຕວນ ເປັນຄົນທີ່ດຸໝັ່ນ ຫຼາຍ. ລາວໄປເຮັດວຽກໄວ ແລະ ກໍມີຄວາມກຽມພ້ອມ. ນອກຈາກນີ້ ລາວຍັງຕັ້ງໃຈເຮັດວຽກໃນເວລາເຮັດວຽກ.

① 똑똑한 ② 부지런한 ③ 멋있는 ④ 재미있는

정답 1. ③ 2. ② 3. ④ 4. ②

 **발음** ການອອກສຽງ  P-02

### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ໃນພາສາເກົາຫຼີມີ ສະຫຼະປະສົມ 13 ໂຕຄື: '야, 여, 요, 유, 예, 얘, 와, 워, 의, 위, 외, 왜, 웨'.

(1) 야, 여, 요, 유, 의, 위
(2) 와, 워, 외, 왜, 웨
(3) 우유, 여우, 이유, 예의

# 10 어제 도서관에서 한국어를 공부했어요

## ມື້ວານ ຂ້ອຍໄດ້ຮຽນພາສາເກົາຫຼີ ຢູ່ຫໍສະໝຸດ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການຖາມ-ຕອບກ່ຽວກັບສະພາບອາກາດ ແລະ ສະຖານທີ່ |
| □ ໄວຍາກອນ | -았/었-, 에서 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ວັນທີ ແລະ ວັນ ສະຖານທີ່ ແລະ ການເຄື່ອນຍ້າຍ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ວັນພັກທາງລັດຖະການຂອງເກົາຫຼີ |



## 대화 1 ບົດສົນທະນາ 1

Track 34



ຕໍ່ໄປ ເປັນບົດສົນທະນາ ລະຫວ່າງ ຊູຣູ ແລະ ຕວນ. ທັງສອງຄົນຖາມເຊິ່ງກັນແລະກັນກ່ຽວກັບເມື່ອໃດທີ່ ພວກເຂົາມາເກົາຫຼີ. ກ່ອນອື່ນ ຈົ່ງຟັງບົດສົນທະນາ 2 ຄັ້ງ ແລ້ວຈຶ່ງເວົ້າຕາມ.

수루 투안 씨는 언제 한국에 왔어요?
ຕວນ ມາເກົາຫຼີເມື່ອໃດ?

투안 올해 2월 10일에 한국에 왔어요.
수루 씨는 언제 한국에 왔어요?
ຂ້ອຍມາເກົາຫຼີ ໃນວັນທີ 10 ເດືອນ 2 ຂອງປີນີ້.
ຊູຣູ ມາເກົາຫຼີເມື່ອໃດ?

수루 저는 작년 7월에 왔어요.
ຂ້ອຍມາເກົາຫຼີ ໃນເດືອນ 7 ຂອງປີກາຍ.

**월 일** ເດືອນ, ວັນ

ໃນການເວົ້າ ວັນທີເດືອນ, ແມ່ນໃຊ້ '월' ສຳລັບ ເດືອນ ແລະ '일' ສຳລັບວັນທີ.
- 오늘은 9월 7일이에요.
  ມື້ນີ້ ແມ່ນວັນທີ 7 ເດືອນ 9.
- 저는 3월 1일부터 회사에 가요.
  ຂ້ອຍເລີ່ມເຮັດວຽກຢູ່ບໍລິສັດແຕ່ວັນທີ 1 ເດືອນ 3.

**언제** ເມື່ອໃດ

ໃຊ້ໃນປະໂຫຍກຄຳຖາມ ເພື່ອສອບຖາມກ່ຽວກັບໃນໃດໜຶ່ງຂອງເວລາ.
- 언제 한국어를 공부해요?
  ເລີ່ມຮຽນພາສາເກົາຫຼີເມື່ອໃດ?
- 수루 씨는 언제 저녁을 먹어요?
  ຊູຣູ ເຈົ້າກິນເຂົ້າແລງເມື່ອໃດ?



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 투안 씨는 언제 한국에 왔어요? ຕວນ ເຈົ້າມາເກົາຫຼີເມື່ອໃດ?
2. 수루 씨는 언제 한국에 왔어요? ຊູຣູ ເຈົ້າມາເກົາຫຼີເມື່ອໃດ?

정답 1. 2월 10일에 왔어요. 2. 작년 7월에 왔어요.

**Tip 날짜** ວັນເວລາ

| ○월 ເດືອນ | 1월 | 2월 | 3월 | 4월 | 5월 | 6월 | 7월 | 8월 | 9월 | 10월 | 11월 | 12월 |
|---|---|---|---|---|---|---|---|---|---|---|---|---|
| | 일월 | 이월 | 삼월 | 사월 | 오월 | **유월** | 칠월 | 팔월 | 구월 | **시월** | 십일월 | 십이월 |

| ○일 ວັນ | | | | | | | | | | | |
|---|---|---|---|---|---|---|---|---|---|---|---|
| | 1일 | 2일 | 3일 | 4일 | 5일 | 6일 | 7일 | 8일 | 9일 | 10일 | ...... |
| | 일일 | 이일 | 삼일 | 사일 | 오일 | 육일 | 칠일 | 팔일 | 구일 | 십일 | |
| | 21일 | 22일 | 23일 | 24일 | 25일 | 26일 | 27일 | 28일 | 29일 | 30일 | 31일 |
| | 이십일일 | 이십이일 | 이십삼일 | 이십사일 | 이십오일 | 이십육일 | 이십칠일 | 이십팔일 | 이십구일 | 삼십일 | 삼십일일 |





## 어휘 1 ຄຳສັບ 1 날짜와 요일 ວັນເວລາ ແລະ ບັນດາວັນ



ມື້ນີ້ແມ່ນວັນທີ ແລະ ເດືອນໃດ?

2015년 **5월** ເດືອນ 5

| 일요일 | 월요일 | 화요일 | 수요일 | 목요일 | 금요일 | 토요일 | |
|---|---|---|---|---|---|---|---|
| | | | 1 | 2 | 3 | 4 | |
| 5 | 6 | 7 | 8 | 9 | 10 | 11 | ← 지난주 |
| 12 | 13 | 14 | 15 어제 | 16 오늘 | 17 내일 | 18 주말 | ← 이번 주 |
| 19 주말 | 20 | 21 | 22 | 23 | 24 | 25 | ← 다음 주 |
| 26 | 27 ← | 28 | 29 주중 | 30 | 31 → | | |

지난달 ເດືອນຜ່ານມາ

이번 달 ເດືອນນີ້

다음 달 ເດືອນໜ້າ

어제 ມື້ວານ　　오늘 ມື້ນີ້　　내일 ມື້ອື່ນ

지난주 ອາທິດຜ່ານມາ　　이번 주 ອາທິດນີ້　　다음 주 ອາທິດໜ້າ

주중
ວັນລັດຖະການ (ວັນຈັນ-ວັນສຸກ)

주말
ວັນທ້າຍອາທິດ (ວັນເສົາ-ວັນທິດ)




작년 ປີຜ່ານມາ




올해 ປີນີ້

5 2016년

내년 ປີໜ້າ



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບ ຂ້າງເທິງນັ້ນ.

1. 그림을 보고 〈보기〉처럼 대화를 완성하세요. ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.

2015년 **3월** ເດືອນ 3

| 일요일 | 월요일 | 화요일 | 수요일 | 목요일 | 금요일 | 토요일 |
|---|---|---|---|---|---|---|
| | 1 | 2 | 3 | 4 | 5 | 6 |
| 7 | 8 | 9 | 10 오늘 | 11 | 12 | 13 |
| 14 | 15 | 16 | 17 | 18 | 19 | 20 |
| 21 | 22 | 23 | 24 | 25 | 26 | 27 |
| 28 | 29 | 30 | 31 | | | |

보기
가: 오늘은 무슨 요일이에요? ມື້ນີ້ແມ່ນວັນຫຍັງ?
나: <u>수요일이에요.</u> ມື້ນີ້ແມ່ນວັນພຸດ.

1) 가: 내일은 무슨 요일이에요?
나: ______________________.

2) 가: 오늘은 몇 월 며칠이에요?
나: ______________________.

3) 가: 어제는 무슨 요일이에요?
나: ______________________.

4) 가: 이번 주 토요일은 몇 월 며칠이에요?
나: ______________________.

정답 1) 목요일이에요 2) 삼월 십일이에요 3) 화요일이에요 4) 삼월 십삼일이에요

**Tip 시간 부사** ຄຳກຳມະວິເສດກ່ຽວກັບເວລາ

ພຽງແຕ່ຕື່ມ '에' ໃສ່ທາງຫຼັງຂອງຄຳສັບ ຫຼື ສຳນວນທີ່ກ່ຽວກັບເວລາ, ແຕ່ວ່າ ສຳລັບ '어제(ມື້ວານ)', '오늘(ມື້ນີ້)', '내일(ມື້ອື່ນ)', '올해(ປີນີ້)', '언제(ເມື່ອໃດ)', '다음(ໜ້າ)' ບໍ່ຈຳເປັນຕ້ອງຕື່ມ '에'.

## 문법 1 ໄວຍາກອນ 1 -았/었-




'-았/었-' ແມ່ນຮູບແບບກາລະອະດີດ ມັນຖືກໃຊ້ຕື່ມທ້າຍຄຳກຳມະ, ຄຳຄຸນນາມ ເພື່ອຊີ້ໃຫ້ເຫັນວ່າ ສະຖານະການ ຫຼື ເຫດການເຫຼົ່ານັ້ນແມ່ນໄດ້ເກີດຂຶ້ນແລ້ວໃນເວລາທີ່ນຳມາເວົ້າ. ມີຄວາມໝາຍວ່າ 'ໄດ້'.

| ㅏ, ㅗ → **-았어요** | ㅓ, ㅜ, ㅣ ເປັນຕົ້ນ → **-었어요** | 하다 → **했어요** |
|---|---|---|
| 가다 → **갔어요**<br>보다 → **봤어요** | 먹다 → 먹**었어요**<br>읽다 → 읽**었어요** | 공부하다 → 공부**했어요**<br>운동하다 → 운동**했어요** |

· 친구하고 시장에 **갔어요**. (ຂ້ອຍ) ໄດ້ໄປຕະຫຼາດກັບໝູ່.
· 식당에서 점심을 **먹었어요**. (ຂ້ອຍ) ໄດ້ກິນເຂົ້າກັບໝູ່ຢູ່ຮ້ານອາຫານ.
· 기숙사에서 한국어를 **공부했어요**. (ຂ້ອຍ) ໄດ້ຮຽນພາສາເກົາຫຼີຢູ່ຫໍພັກ.



ເຂົ້າໃຈການໃຊ້ເປັນອາດີດແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້ຄືດັ່ງຕົວຢ່າງ.

2. 그림을 보고 〈보기〉처럼 대화를 완성하세요. ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.





운동하다

가: 어제 뭐 했어요? ມື້ວານ ເຈົ້າໄດ້ເຮັດຫຍັງ?
나: 운동했어요. ມື້ວານ ຂ້ອຍໄດ້ອອກກຳລັງກາຍ.

1) 텔레비전을 보다
가: 어제 저녁에 뭐 했어요?
나: ______________________.

2) 

저녁을 먹다
가: 친구하고 뭐 했어요?
나: ______________________.

3) 
친구를 만나다
가: 일요일에 뭐 했어요?
나: ______________________.

4) 쉬다
가: 5월 5일에 뭐 했어요?
나: ______________________.

정답 1) 텔레비전을 봤어요 2) 저녁을 먹었어요 3) 친구를 만났어요 4) 쉬었어요



ລອງຮຽນນຳກັນຕື່ມບໍ? ຈົ່ງເບິ່ງຮູບ ແລະ ຕື່ມໃສ່ປະໂຫຍກໂດຍການໃຊ້ເປັນອາດີດ ຄືດັ່ງຕົວຢ່າງ.

1.  어제 ______________________.

2.  주말에 ______________________.

정답 1. 커피를 마셨어요 2. 요리했어요



## 대화 2 ບົດສົນທະນາ 2

Track 35



ຣີຮັນ ແລະ ຕວນ ກຳລັງລົມກັນກ່ຽວກັບວຽກໃດໜຶ່ງທີ່ເຮັດມື້ວານ. ຈົ່ງຊອກຮູ້ວ່າ ມື້ວານ ສອງຄົນນີ້ເຮັດຫຍັງ? ກ່ອນອື່ນ ຈົ່ງຟັງບົດສົນທະນາ 2 ຄັ້ງກ່ອນ ແລະ ເວົ້າຕາມ.

리한 **투안 씨, 어제 뭐 했어요?**
ຕວນ ມື້ວານ ເຈົ້າໄດ້ເຮັດຫຍັງ?

투안 **친구하고 PC방에서 게임했어요.**
**리한 씨는 어제 뭐 했어요?**
ມື້ວານ ຂ້ອຍກັບໝູ່ ຫຼິ້ນເກມຢູ່ຫ້ອງຄອມພິວເຕີ.
ຣີຮັນ ມື້ວານເຈົ້າໄດ້ເຮັດຫຍັງ?

리한 **도서관에서 한국어를 공부했어요.**
ຂ້ອຍໄດ້ຮຽນພາສາເກົາຫຼີ ຢູ່ຫໍສະໝຸດ.

> **하고** ແລະ
> ໃຊ້ສຳລັບກິດຈະກຳ ຫຼື ວຽກໃດທີ່ເຮັດ ຮ່ວມກັນ ຫຼື ໃຊ້ຄືກັນກັບ 같이.
> · 저는 리한 씨하고 한국어를 배워요.
> ຂ້ອຍ ແລະ ຣີຮັນ ຮຽນພາສາເກົາຫຼີ ນຳກັນ.
> · 동생하고 같이 저녁을 먹어요.
> ຂ້ອຍ ແລະ ນ້ອງກິນເຂົ້າແລງນຳກັນ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 투안 씨는 어제 뭐 했어요? ຕວນ ມື້ວານໄດ້ເຮັດຫຍັງ?
2. 리한 씨는 도서관에서 뭐 했어요? ຣີຮັນ ໄດ້ເຮັດຫຍັງຢູ່ຫໍສະໝຸດ?

정답 1. 친구하고 PC방에서 게임했어요. 2. 한국어를 공부했어요.

### Tip '하다' 동사 ຄຳກຳມະ '하다'

ໃນພາສາເກົາຫຼີ ໃນກໍລະນີ '게임을 했어요' ສາມາດປ່ຽນເປັນ '게임했어요' ໄດ້. ໃນກໍລະນີຄືດັ່ງກ່າວນີ້ແມ່ນມີຫຼາຍ.

- 공부를 하다 → 공부하다
- 노래를 하다 → 노래하다
- 전화를 하다 → 전화하다
- 요리를 하다 → 요리하다
- 운동을 하다 → 운동하다
- 쇼핑을 하다 → 쇼핑하다
- 게임을 하다 → 게임하다
- 일을 하다 → 일하다



ໃນພາສາເກົາຫຼີ '공부를 하다', '운동을 하다', '노래를 하다', '쇼핑을 하다', '요리를 하다', '게임을 하다' ເປັນຕົ້ນ ຄຳນາມ 'ຄຳນາມ + 을/를 + 하다' ແມ່ນມີຫຼາຍ. ເມື່ອເປັນຄຳກຳມະ ໃນເວລາຂຽນ ແມ່ນຈະບໍ່ມີ '을/를', ຍ້ອນເຫດຜົນນີ້ '공부를 하다' ຈຶ່ງຂຽນເປັນ '공부하다'.



## 어휘 2 ຄຳສັບ 2 — 장소와 동작 ສະຖານທີ່ ແລະ ພຶດຕິກຳ



ລອງໄປຮຽນຮູ້ກ່ຽວກັບກິດຈະກຳຫຍັງ ທີ່ເຮັດໃນສະຖານທີ່ຕ່າງໆຕໍ່ໄປນີ້ເບິ່ງບໍ?















공원
ສວນສາທາລະນະ

커피숍
ຮ້ານກາເຟ

서점
ຮ້ານຂາຍປຶ້ມ

도서관
ຫໍສະໝຸດ

















백화점
ຮ້ານຊັບພະສິນຄ້າ

노래방
ຮ້ານຄາຣາໂອເກ

PC방
ຮ້ານຄອມພິວເຕີ

영화관(극장)
ໂຮງໜັງ





산책하다
ຍ່າງຕາກອາກາດ

친구를 만나다
ພົບໝູ່ເພື່ອນ

책을 읽다
ອ່ານປຶ້ມ

한국어를 공부하다
ຮຽນພາສາເກົາຫຼີ

- **공원**에서 **산책해요.**
  ຍ່າງຕາກອາກາດ ຢູ່ສວນສາທາລະນະ.
- **커피숍**에서 **친구를 만나요.**
  커피를 마셔요.
  ພົບໝູ່ເພື່ອນ ຢູ່ຮ້ານດື່ມກາເຟ ແລ້ວດື່ມກາເຟ.
- **서점**에서 책을 사요.
  ຊື້ປຶ້ມ ຢູ່ຮ້ານຂາຍປຶ້ມ.
- **도서관**에서 **책을 읽어요.**
  **한국어를 공부해요.**
  ອ່ານປຶ້ມ ຢູ່ຫໍສະໝຸດ ຮຽນພາສາເກົາຫຼີ.
- **백화점**에서 **쇼핑해요.**
  ຈັບຈ່າຍຊື້ເຄື່ອງຂອງ ຢູ່ຮ້ານຊັບພະສິນຄ້າ.
- **노래방**에서 **노래해요.**
  ຮ້ອງເພງ ຢູ່ຮ້ານຄາຣາໂອເກ.
- **PC방**에서 **게임해요.**
  ຫຼິ້ນເກມ ຢູ່ຮ້ານຄອມພິວເຕີ.
- **영화관**에서 **영화를 봐요.**
  ເບິ່ງໜັງຢູ່ໂຮງໜັງ.
- **기숙사**에서 **음식을 만들어요.**
  ແຕ່ງອາຫານ ຢູ່ຫໍພັກ.











쇼핑하다
ຈັບຈ່າຍຊື້ເຄື່ອງຂອງ

노래하다
ຮ້ອງເພງ

게임하다
ຫຼິ້ນເກມ

영화를 보다
ເບິ່ງໜັງ

음식을 만들다
ແຕ່ງອາຫານ



ຈົ່ງບໍ່ເບິ່ງຄຳສັບກ່ຽວກັບສະຖານທີ່ ຂ້າງເທິງນັ້ນ ແລ້ວລອງຕອບຄຳຖາມຕໍ່ໄປນີ້ເບິ່ງບໍ?

1. 그림을 보고 알맞은 단어를 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

① 

② 



③ 

④ 



㉠ 노래방　㉡ 커피숍　㉢ 백화점　㉣ 영화관

정답 ①㉡ ②㉠ ③㉣ ④㉢

## 문법 2 ໄວຍາກອນ 2 에서

G10-2

'에서' ມັນຖືກໃຊ້ກັບຄຳກຳມະເຄື່ອນໄຫວ ເພື່ອຊີ້ບອກວ່າ ເກີດມີການກະທຳ, ການເຄື່ອນໄຫວໃດໜຶ່ງເກີດຂຶ້ນຢູ່ສະຖານທີ່ນັ້ນ. ມີຄວາມໝາຍວ່າ 'ຢູ່ (ທີ່)'.

- 가: 어디**에서** 한국어를 공부해요? (ເຈົ້າ) ຮຽນພາສາເກົາຫຼີຢູ່ໃສ?
  나: 도서관**에서** 공부해요. (ຂ້ອຍ) ຮຽນຢູ່ຫໍສະໝຸດ.
- 가: 어디**에서** 친구를 만났어요? (ເຈົ້າ) ໄດ້ພົບໝູ່ຢູ່ໃສ?
  나: 영화관**에서** 만났어요. (ຂ້ອຍ) ໄດ້ພົບໝູ່ຢູ່ໂຮງໜັງ.
- 가: 백화점**에서** 쇼핑했어요? (ເຈົ້າ) ໄດ້ໄປເລາະຊື້ເຄື່ອງຢູ່ຮ້ານສັບພະສິນຄ້າບໍ?
  나: 아니요, 시장**에서** 쇼핑했어요. ບໍ່, (ຂ້ອຍ) ໄດ້ໄປເລາະຊື້ເຄື່ອງຢູ່ຕະຫຼາດ.



### 비교해 보세요 ຈົ່ງປຽບທຽບເບິ່ງ

**✔ ລະຫວ່າງ '에' ທີ່ໃຊ້ກັບສະຖານທີ່ ກັບ '에서'**

'에' ກັບ '에서' ທັງສອງແມ່ນໃຊ້ຕື່ມທ້າຍຄຳນາມສະຖານທີ່ໄດ້ໝົດ. ຕ່າງກັນພຽງແຕ່ '에' ຖືກໃຊ້ຊີ້ບອກທີ່ຕັ້ງຂອງຄົນ, ສິ່ງຂອງຕ່າງໆ. ສ່ວນ '에서' ແມ່ນຖືກໃຊ້ຊີ້ບອກວ່າເກີດມີການກະທຳ ຫຼື ການ ເຄື່ອນໄຫວໃດໜຶ່ງເກີດຂຶ້ນຢູ່ສະຖານທີ່ນັ້ນ.

- 투안 씨는 한국**에** 있어요. (O) 투안 씨는 한국에서 있어요. (X)
- 투안 씨가 운동장에 축구를 해요. (X) 투안 씨가 운동장**에서** 축구를 해요. (O)



ເຂົ້າໃຈການໃຊ້ '에서' ແລ້ວບໍ? ສະນັ້ນ ຈົ່ງລອງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.

**2. 그림을 보고 〈보기〉처럼 대화를 완성하세요.** ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.






가: 어제 뭐 했어요? ມື້ວານ ໄດ້ເຮັດຫຍັງບໍ?
나: 공원에서 산책했어요. ຂ້ອຍໄດ້ໄປຍ່າງຕາກອາກາດ ຢູ່ສວນສາທາລະນະ.

1) 
가: 어제 뭐 했어요?
나: ______________________.

2) 
가: 어제 뭐 했어요?
나: ______________________.

3) 
가: 어제 뭐 했어요?
나: ______________________.

4) 
가: 어제 뭐 했어요?
나: ______________________.

정답 1) 도서관에서 한국어를 공부했어요 2) 백화점에서 쇼핑했어요
3) 영화관에서 영화를 봤어요 4) 커피숍에서 친구를 만났어요



### 유용한 표현 ສຳນວນທີ່ສຳຄັນ

**마음에 들어요. ຖືກໃຈ.**

가: 이 잠바 어때요? ເສື້ອກັນໜາວນີ້ ເປັນແນວໃດ?
나: 정말 **마음에 들어요**. ຖືກໃຈຫຼາຍ.



## 활동 ກິດຈະກຳ

이번 달에 어디에서 무엇을 했어요? 달력을 보면서 친구에게 이야기해 주세요.
ໃນເດືອນນີ້ ໄດ້ເຮັດຫຍັງ? ຢູ່ໃສ? ຈົ່ງເບິ່ງປະຕິທິນ ແລ້ວລອງສ້າງບົດສົນທະນາກັບໝູ່ເບິ່ງ.



**5월** ເດືອນ 5

| 일요일 | 월요일 | 화요일 | 수요일 | 목요일 | 금요일 | 토요일 |
|---|---|---|---|---|---|---|
| | | | 1 | 2 | 3 | 4 |
| 5 | 6 | 7 | 8 | 9 | 10 | 11 영화관 |
| 12 | 13 | 14 | 15 | 16 오늘 | 17 | 18 |
| 19 | 20 | 21 | 22 | 23 | 24 백화점 | 25 |
| 26 | 27 | 28 | 29 | 30 | 31 | |



ຈົ່ງເບິ່ງປະຕິທິນຂ້າງເທິງນັ້ນ ແລ້ວຈົ່ງຕອບຄຳຖາມເປັນອານາຄົດລອງເບິ່ງ.

**✚ 알맞은 말에 ✓ 하세요.** ຈົ່ງຕື່ມເຄື່ອງໝາຍ ✓ ໃສ່ຄຳເວົ້າທີ່ເໝາະສົມ.

1. 내일은 5월 17일이에요. ມື້ອື່ນ ແມ່ນວັນທີ 17 ເດືອນ 5. ☐ 네 ☐ 아니요
2. 이번 주 토요일에 영화를 봐요. ໃນວັນເສົາ ອາທິດນີ້ ເບິ່ງໜັງ. ☐ 네 ☐ 아니요
3. 주말에 백화점에서 쇼핑했어요. ທ້າຍອາທິດ ແມ່ນໄດ້ຈັບຈ່າຍຊື້ເຄື່ອງຂອງຢູ່ຫ້າງຊັບພະສິນຄ້າ. ☐ 네 ☐ 아니요
4. 다음 주 화요일은 5월 21일이에요. ອາທິດໜ້າ ວັນອັງຄານ ແມ່ນວັນທີ 21 ເດືອນ 5. ☐ 네 ☐ 아니요

정답 1. 네 2. 아니요 3. 아니요 4. 네

## 퀴즈 ຄຳທວາຍ

**✚ 다음 단어를 보고 생각나는 장소가 어디예요?**
ຕໍ່ໄປ ຈົ່ງເບິ່ງຄຳສັບ ແລະ ຄິດທົບທວນເບິ່ງວ່າ ສະຖານທີ່ນັ້ນຢູ່ໃສ?

나무 — 벤치 — 운동 — 산책 — ?

정답 공원



## 정보 ຂໍ້ມູນທົ່ວໄປ

# 한국의 공휴일

ວັນພັກລັດຖະການຂອງເກົາຫຼີ




- 신정

ປີໃໝ່ສາກົນ ແມ່ນວັນປີໃໝ່ທີ່ກຳນົດຕາມປະຕິທິນສາກົນ ແລະ ກຳນົດເອົາມື້ທຳອິດຂອງປີໃໝ່.

- 설날

ປີໃໝ່ເກົາຫຼີ ເປັນອີກບຸນໜຶ່ງທີ່ມີຄວາມສຳຄັນຂອງ ເກົາຫຼີ ເຊິ່ງບັນດາສະມາຊິກໃນຄອບຄົວ ແລະ ຍາດຕິພີ່ນ້ອງ ເຖົ້າໂຮມ ເພື່ອສະແດງຄວາມເຄົາລົບກາບໄຫວ້ຕໍ່ບັນພະບຸລຸດ ແລະ ຍັງເປັນວັນທີ່ອວຍພອນປີໃໝ່ເຊິ່ງກັນ ແລະ ກັນ.

- 삼일절 (3.1절)

ວັນເຄື່ອນໄຫວ ເພື່ອເອກະລາດ ວັນທີ 1 ເດືອນ 3 ເປັນວັນພັກທາງລັດຖະການອີກມື້ໜຶ່ງຂອງເກົາຫຼີ ເພື່ອລະນຶກເຖິງວັນເຄື່ອນໄຫວເພື່ອເອກະລາດຕ້ານການປົກຄອງຂອງຍີ່ປຸ່ນ.

- 근로자의 날

ວັນແຮງງານ ເປັນວັນລະນຶກເຖິງຊາວຜູ້ອອກແຮງງານ ແລະ ເພື່ອເປັນການປຸກລະດົມແຮງຈູງໃຈເຂົ້າໃນການເຮັດວຽກຂອງຊາວຜູ້ອອກແຮງງານ.

- 어린이날

ວັນເດັກນ້ອຍ ເປັນວັນທີ່ອວຍພອນໃຫ້ກັບເດັກ ນ້ອຍທັງຫຼາຍຈົ່ງມີສຸຂະພາບແຂງແຮງ ແລະ ມີຄວາມສຸກ.

- 석가탄신일

ວັນປະສູດ ຂອງພະພຸດທະເຈົ້າເປັນວັນທີ່ເຊື່ອ ກັນວ່າ ເປັນວັນທີ່ພະພຸດທະເຈົ້າໄດ້ລົງມາເກີດຍັງໂລກມະນຸດ.

- 현충일

ວັນລະນຶກເຖິງບັນພະບຸລຸດ ເປັນວັນທີ່ລະນຶກເຖິງ ບັນດາຕຳຫຼວດ ແລະ ທະຫານ ຂອງເກົ້າຫຼີທີ່ໄດ້ເສຍສະຫຼະເລືອດເນື້ອ ເພື່ອປະເທດຊາດ.

- 광복절

ວັນປະກາດ ເອກະລາດເປັນວັນພັກລັດຖະການເພື່ອ ລະນຶກເຖິງການໄດ້ເປັນເອກປະເທດເອກະລາດ ຂອງເກົາຫຼີອອກຈາກການປົກຄອງຂອງຍີ່ປຸ່ນ.

- 추석

ວັນຈູຊອກ ຫຼື ວັນແຫ່ງການຂອບໃຈຕາມປະຕິທິນລູນາ, ແມ່ນຖືກວັນທີ 15 ຂອງເດືອນ 8 ເປັນມື້ພັກທາງລັດຖະ ການອີກມື້ໜຶ່ງຂອງເກົາຫຼີ ໃນວັນດັ່ງກ່າວຄົນເກົາຫຼີ ແມ່ນມັກຈະໄປຢຽມຢາມພີ່ນ້ອງ ແລະ ກ່າວຄຳຂອບໃຈ ເຊິ່ງມັກຈະເຮັດອາຫານກິນເຊັ່ນ: ຊົງພະຍອນ ແລະ ໝາກໄມ້ຕ່າງໆ.

- 개천절

ວັນກໍ່ຕັ້ງປະເທດເປັນວັນພັກທີ່ລະນຶກເຖິງການກໍ່ຕັ້ງ ແລະ ພັດທະນາປະເທດຊາດ.

- 한글날

ວັນພາສາເກົາຫຼີ ເປັນວັນທີ່ລະນຶກເຖິງເຈົ້າຊີວິດ ເຊຈູງ ທີ່ໄດ້ສ້າງພາສາທີ່ເປັນຂອງເກົາຫຼີຂຶ້ນມາ.

- 크리스마스

ວັນຄຣິດສະມາດເປັນວັນລະນຶກເຖິງວັນຄ້າຍ ວັນເກີດຂອງພະເຢຊູ.



# EPS-TOPIK 듣기 ພາກຟັງ EPS-TOPIK



ຈົ່ງຕັ້ງໃຈຟັງ ແລະ ເລືອກເອົາວັນທີເດືອນທີ່ຖືກຕ້ອງ.

[1~3] 듣은 것을 고르십시오. ຈົ່ງເລືອກເອົາຄຳຕອບທີ່ໄດ້ຍິນ.




1. ① 1월 2일　② 1월 12일　③ 2월 21일　④ 2월 22일

2. ① 3월 10일　② 3월 20일　③ 4월 10일　④ 4월 20일

3. ① 11월 15일　② 11월 25일　③ 12월 15일　④ 12월 25일



ຕໍ່ໄປ ຈົ່ງເລືອກເອົາຄຳຕອບທີ່ຖືກຕ້ອງຕາມແຕ່ລະຄຳຖາມ. ກ່ອນທີ່ຈະໄປຟັງຄຳຖາມ ຈົ່ງທຳຄວາມເຂົ້າໃຈກັບແຕ່ລະຄຳຕອບກ່ອນ.

[4~5] 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

4. ① 작년에 왔어요.　② 베트남에서 왔어요.
③ 동생이 한국에 왔어요.　④ 친구하고 한국에 왔어요.

5. ① 도서관이 커요.　② 도서관에 가요.
③ 도서관에 없어요.　④ 도서관에서 공부했어요.



### 듣기 대본 ເນື້ອໃນບົດຟັງ

1. 여: 일월 십이일 ວັນທີ 12 ເດືອນ 1
2. 남: 사월 십일 ວັນທີ 10 ເດືອນ 4
3. 여: 십이월 이십오일 ວັນທີ 25 ເດືອນ 12
4. 남: 언제 한국에 왔어요? ເຈົ້າມາເກົາຫຼີ ເມື່ອໃດ?
5. 여: 어제 뭐 했어요? ມື້ວານ ໄດ້ເຮັດຫຍັງ?

정답 1. ② 2. ③ 3. ④ 4. ① 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ  L-10

1. 들은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ໄດ້ຍິນ.

① 내일은 7월 11일이에요. ② 내일은 7월 30일이에요.
③ 오늘은 7월 20일이에요. ④ 오늘은 7월 31일이에요.

2. 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

① 10일이에요. ② 12월이에요.
③ 화요일이에요. ④ 5시 10분이에요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 오늘은 7월 31일이에요. ມື້ນີ້ແມ່ນ ວັນທີ 31 ເດືອນ 7.
2. 남: 내일이 무슨 요일이에요? ມື້ອື່ນ ແມ່ນວັນຫຍັງ?

정답 1. ④ 2. ③

### 유용한 표현 ສຳນວນທີ່ສຳຄັນ

**제 생각에도 그래요. ຂ້ອຍກໍຄິດແນວນັ້ນຄືກັນ.**

가: 회식도 회사 생활에서 중요한 것 같아요. ຂ້ອຍຄິດວ່າ ການກິນເຂົ້າຮ່ວມກັນ ກໍເປັນສິ່ງໜຶ່ງທີ່ສຳຄັນຂອງຊີວິດການເຮັດວຽກ.
나: **제 생각에도 그래요. ຂ້ອຍກໍຄິດແນວນັ້ນຄືກັນ.**



## EPS-TOPIK 읽기 ພາກອ່ານ EPS-TOPIK



ສຳລັບຂໍ້ 1 ແມ່ນກ່ຽວກັບສະຖານທີ່, ສ່ວນຂໍ້ 2 ແລະ 3 ແມ່ນຈະກ່ຽວກັບພຶດຕິກຳ. ຈົ່ງເລືອກເອົາສຳນວນທີ່ເໝາະສົມກັບຮູບພາບ.

**[1~3] 다음 그림을 보고 맞는 단어나 문장을 고르십시오.**
ຈົ່ງເບິ່ງຮູບພາບ ແລ້ວເລືອກເອົາຄຳສັບ ຫຼື ປະໂຫຍກທີ່ຖືກຕ້ອງກັບຮູບພາບນັ້ນ.

1.



① 커피숍　② 도서관
③ 노래방　④ 백화점

2.



① 쇼핑해요.　② 노래해요.
③ 공부해요.　④ 게임해요.

3.



① 책을 읽어요.　② 영화를 봐요.
③ 친구를 만나요.　④ 음식을 만들어요.



ຕໍ່ໄປ ເປັນການເລືອກເອົາຄຳສັບ ທີ່ຖືກຕ້ອງຕື່ມໃສ່ຫວ່າງເປົ່າໃນປະໂຫຍກ. ຈົ່ງຄິດທົບທວນກ່ຽວກັບປະໂຫຍກ ແລະ ການໃຊ້ເປັນອາດິດກ່ອນໜ້ານີ້ ແລ້ວຕອບຄຳຖາມຕໍ່ນີ້.

**[4~5] 빈칸에 들어갈 가장 알맞은 것을 고르십시오.** ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

4.
가: ______________ 한국에 왔어요? ເຈົ້າມາເກົາຫຼີ ເມື່ອໃດ?
나: 작년 7월에 왔어요. ຂ້ອຍມາເກົາຫຼີ ແຕ່ເດືອນ 7 ປີຜ່ານມາ.

① 누가　② 어디　③ 무슨　④ 언제

5.
가: 어제 뭐 했어요? ມື້ວານ ໄດ້ເຮັດຫຍັງ?
나: 극장에서 영화를 ______________. ໄປເບິ່ງໜັງຢູ່ໂຮງໜັງ.

① 갔어요　② 봤어요　③ 쇼핑했어요　④ 산책했어요

정답 1. ① 2. ② 3. ③ 4. ④ 5. ②



## 확장 연습 ບົດເຝິກຫັດເພີ່ມເຕີມ

**[1~2] 다음 그림을 보고 맞는 문장을 고르십시오.** ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກ ທີ່ຖືກຕ້ອງ.

1.




① 서점 ② 도서관
③ 백화점 ④ 영화관

2.



① 게임을 해요. ② 산책을 해요.
③ 영화를 봐요. ④ 책을 읽어요.

**[3~4] 빈칸에 들어갈 가장 알맞은 것을 고르십시오.** ຈົ່ງເລືອກເອົາສຳນວນທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.

> 저는 ________에 운동을 합니다. 토요일에는 등산을 하고 일요일에는 회사 동료들과 축구를 합니다.
>
> ສຳລັບຂ້ອຍ ມັກອອກກຳລັງກາຍໃນວັນທ້າຍອາທິດ. ໃນວັນເສົາໄປໄຕ່ພູ ແລະ ວັນທິດແມ່ນຈະຫຼິ້ນກິລາບານເຕະກັບເພື່ອນຮ່ວມງານ.

① 내년 ② 어제 ③ 작년 ④ 주말

4.

> 가: 주말에 어디에서 쇼핑했어요? ໃນທ້າຍອາທິດ ເຈົ້າໄປຈັບຈ່າຍຊື້ເຄື່ອງຂອງຢູ່ໃສ?
>
> 나: ______________________.

① 구두를 샀어요. ② 지난주에 샀어요.
③ 백화점에서 쇼핑했어요. ④ 동생하고 쇼핑했어요.

정답 1. ② 2. ③ 3. ④ 4. ③



## 발음 ການອອກສຽງ




### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ໃນພາສາເກົາຫຼີ ຈະມີສຽງພະຍັນສະນະສຽງຕ່ຳ, ສຽງກາງ ແລະ ສຽງສູງ ເຊັ່ນວ່າ ㅂ, ㅃ, ㅍ [p, p', $p^h$] ເຈົ້າຂອງພາສາມາດຈຳແນກໄດ້ງ່າຍດາຍ ແຕ່ສຳລັບຜູ້ທີ່ຮຽນພາສາເກົາຫຼີການຈຳແນກສຽງດັ່ງກ່າວນີ້ ບໍ່ແມ່ນເລື່ອງງ່າຍປານໃດ. ນອກຈາກນີ້ ຍັງປະກອບມີ ພະຍັນຊະນະ ㄷ, ㄸ, ㅌ [t, t', $t^h$] ແລະ ㅈ, ㅉ, ㅊ [ʧ, ʧ', $ʧ^h$].

(1) ㅂ : ㅃ : ㅍ,　ㄷ : ㄸ : ㅌ,　ㄱ : ㄲ : ㅋ,　ㅈ : ㅉ : ㅊ
(2) 바 : 빠 : 파,　다 : 따 : 타,　가 : 까 : 카,　자 : 짜 : 차
(3) 보 : 뽀 : 포,　도 : 또 : 토,　고 : 꼬 : 코,　조 : 쪼 : 초
(4) 사자, 기차, 커피, 포도, 도토리, 토끼, 코끼리



# 사과 다섯 개 주세요

ເອົາໝາກແອັບເປີ້ນໃຫ້ 5 ໜ່ວຍແດ່

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| ☐ ຈຸດປະສົງໃນການຮຽນ | ການຊື້ວັດຖຸສິ່ງຂອງ |
| ☐ ໄວຍາກອນ | 주세요, -아/어 주세요 |
| ☐ ຄຳສັບ ແລະ ສຳນວນຄຳເວົ້າ | ໝາກໄມ້ ແລະ ເຄື່ອງບໍລິໂພກ, ເງິນ ແລະ ການຊື້ສິ່ງຂອງ |
| ☐ ຂໍ້ມູນກ່ຽວກັບວັດທະນາທຳ | ເສື້ອຜ້າ, ເຄື່ອງນຸ່ງຫົ່ມ |



## 대화 1 ບົດສົນທະນາ 1






ຕໍ່ໄປ ແມ່ນເປັນການສົນທະນາໃນຮ້ານຂາຍໝາກໄມ້, ຕວນ ກຳລັງຖາມລາຄາໝ າກໄມ້ນຳເຈົ້າຂອງຮ້ານ, ກ່ອນອື່ນໝົດຟັງບົດສົນທະນາ ສອງ ຄັ້ງແລ້ວເວົ້າຕາມ.

주인 어서 오세요.
ເຊີນເຂົ້າມາໃນ.

투안 안녕하세요? 이 사과 얼마예요?
ສະບາຍດີ? ໝາກແອັບເປີນນີ້ລາຄາເທົ່າໃດ?

주인 이천 원이에요.
ສອງພັນ ວອນ.

투안 다섯 개 주세요.
ເອົາໃຫ້ ຫ້າໜ່ວຍແດ່.

> 어서 오세요
> ເຊີນເຂົ້າມາໃນ
>
> ໃຊ້ໃນເວລາເຊີນລູກຄ້າເຂົ້າມາໃນຮ້ານ.

> 원 ວອນ
>
> ລຳດັບເງິນຂອງເກົາຫຼີ ຈະເວົ້າແຕ່ '100 ວອນ' ແມ່ນ 'ແພັກວອນ[배권]', '1,000원ວອນ ແມ່ນ 'ຈອນວອນ[처눤]', '10,000' ວອນ ແມ່ນ 'ມັນວອນ[마눤]', '100,000 ວອນ' ແມ່ນ 'ສິບມັນວອນ[심마눤] ຕາມລຳດັບ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 사과가 얼마예요? ໝາກແອັບເປີ້ນລາຄາເທົ່າໃດ?
2. 투안 씨는 사과를 몇 개 샀어요? ຕວນ ໄດ້ຊື້ໝາກແອັບເປີ້ນຈັກໜ່ວຍ?

정답 1. 이천 원이에요. 2. 다섯 개 샀어요.

**Tip 단위 명사 1** ຫົວໜ່ວຍຂອງຄຳນາມ 1

대상에 따라서 세는 단위 명사가 달라집니다. ໃນຄຳນາມໜ່ວຍຈະແຕກຕ່າງກັນໄປເຊິ່ງມັນຈະຂຶ້ນກັບເປົ້າໝາຍຈຸດປະສົງ.

· 사과, 오렌지, 우유 (ໝາກແອັບເປີ້ນ, ໝາກກ້ຽງ, ນົມ): 개 ໜ່ວຍ, ອັນ (한 개, 두 개, 세 개, ⋯ ) (1 ອັນ, 2 ອັນ, 3 ອັນ....)
· 포도, 바나나, 꽃 (ໝາກອາງຸ່ນ, ໝາກກ້ວຍ, ດອກໄມ້): 송이 ເປັນພວງ (한 송이, 두 송이, 세 송이, ⋯ ) ( 1 ພວງ, 2 ພວງ, 3 ພວງ...)
· 수박, 배추 (ໝາກພັກຄຳ, ຜັກກາດ): 통 ເປັນຫົວ (한 통, 두 통, 세 통, ⋯ ) (1 ຫົວ, 2 ຫົວ, 3 ຫົວ....)
· 물, 맥주 (ນ້ຳ, ເບຍ): 병 ເປັນກ້ອງ (한 병, 두 병, ⋯ ) (1 ກອດ, 2 ກອດ, 3 ກອດ...)
· 커피, 주스 (ກາເຟ, ນ້ຳໝາກໄມ້): 잔 ເປັນຈອກ (한 잔, 두 잔, ⋯ ) (1 ຈອກ, 2 ຈອກ, 3 ຈອກ ...)
· 밥, 국, 반찬 (ເຂົ້າ, ແກງ, ອາຫານ): 그릇 ເປັນຖ້ວຍ (한 그릇 , 두 그릇, ⋯) (1 ຖ້ວຍ, 2 ຖ້ວຍ ....)





## 어휘 1 ຄຳສັບ 1 과일과 식료품 ໝາກໄມ້ ແລະ ຂອງກິນ



ມັກໝາກໄມ້ ແລະ ເຄື່ອງດື່ມແບບໃດ? ມາຮຽນຮູ້ຄຳສັບກ່ຽວກັບໝາກໄມ້, ເຄື່ອງດື່ມ ແລະ ອາຫານນຳກັນບໍ?






ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

1. 그림을 보고 알맞은 단어를 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.




정답 ① ㉢ ② ㉣ ③ ㉠ ④ ㉡

## 문법 1 ໄວຍາກອນ 1 주세요




ມັນຖືກໃຊ້ຕື່ມທ້າຍຄຳນາມ ເພື່ອອອກຄຳສັ່ງ ຫຼື ຮ້ອງຂໍເອົາສິ່ງຂອງໃດໜຶ່ງທີ່ຮ້ອງຂໍກັບຄູ່ສົນທະນາ. ສ່ວນຫຼາຍແມ່ນນິຍົມໃຊ້ໃນເວລາທີ່ເຮົາຊື້ສິ່ງຂອງ.

- 가: 뭘 드릴까요? ເອົາຫຍັງ?
  나: 커피 두 잔 **주세요**. ເອົາກາເຟໃຫ້ແດ່ 2 ຈອກ.
- 가: 오렌지 얼마예요? ໝາກກ້ຽງ (ລາຄາ) ເທົ່າໃດ?
  나: 한 개에 천 원이에요. ໜ່ວຍລະ 1,000 ວອນ.
  가: 그럼, 오렌지 다섯 개 **주세요**. ຄັນຊັ້ນ, ເອົາໝາກກ້ຽງໃຫ້ແດ່ 5 ໜ່ວຍ.



ເຂົ້າໃຈການໃຊ້ '주세요' ແລ້ວບໍ? ສະນັ້ນ ຈົ່ງລອງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.

**2. 그림을 보고 〈보기〉처럼 문장을 완성하세요.** ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.

보기

가: 뭘 드릴까요? ຕ້ອງການຫຍັງບໍ?
나: 사과 다섯 개 주세요. ເອົາໝາກແອັບເປີ້ນໃຫ້ 5 ໜ່ວຍແດ່.

1) 가: 뭘 드릴까요?
나: ______________________.

2) 가: 뭘 드릴까요?
나: ______________________.

3) 가: 뭘 드릴까요?
나: ______________________.

4) 가: 뭘 드릴까요?
나: ______________________.

정답 1) 사과 두 개 주세요 2) 오렌지 두 개 주세요 3) 빵 네 개 주세요 4) 우유 한 개 주세요

## 대화 2 ບົດສົນທະນາ 2

Track 38



ຕໍ່ໄປແມ່ນການສົນທະນາໃນຮ້ານຂາຍເກີບ. ຣິຮັນຊື້ເກີບກິລາໃນລາຄາເທົ່າໃດ? ກ່ອນອື່ນ ຈົ່ງຟັງຄືນສອງຄັ້ງ ແລ້ວເວົ້າຕາມ.

리한 사장님, 이 운동화 얼마예요?
ເຖົ້າແກ່ ເກີບກິລາຄູ່ນີ້ລາຄາເທົ່າໃດ?

주인 오만 오천 원이에요.
ຫ້າສິບຫ້າພັນ ວອນ.

리한 오만 오천 원요? 좀 비싸요.
ຫ້າສິບຫ້າພັນວອນບໍ? ຂ້ອນຂ້າງຈະແພງເນາະ.
깎아 주세요.
ຫຼຸດແດ່ໄດ້ບໍ?

주인 그래요? 알았어요. 오만 원 주세요.
ແມ່ນບໍ? ເຂົ້າໃຈແລ້ວ, ຊັ້ນ ຫ້າສິບວອນ.

**그래요? ແມ່ນແທ້ບໍ?**

ໃຊ້ໃນສະຖານນະການເວລາທີ່ປະທັບໃຈ ຫຼືວ່າຕົກໃຈເລັກນ້ອຍ.

- 가: 오늘 저녁에 회식이 있습니다.
  ໃນມື້ນີ້ຕອນແລງ ມີງານລ້ຽງຫ້ອງການ.
- 나: 그래요? 저는 약속이 있어요.
  ແມ່ນບໍ? ຂ້ອຍມີນັດ.

**좀 ຂໍ....ໜ້ອຍໜຶ່ງ, ຂ້ອນຂ້າງ**

'조금' ແລະ '좀'
ແມ່ນມີຄວາມໝາຍຄືກັນ, ແຕ່ວ່າ '조금' ແລະ '좀' ຍັງໃຊ້ເພື່ອຂໍຄວາມຊ່ວຍເຫຼືອ, ຂໍອະນຸຍາດ ຫຼືວ່າ ສະແດງຄວາມອ່ອນໂຍນ.

- 동생은 키가 좀 작아요.
  ນ້ອງຊາຍຂ້ອນຂ້າງຈະຕ່ຳ.
- 빵하고 우유 좀 주세요.
  ຂໍເອົາເຂົ້າຈີ່ ແລະ ນົມໃຫ້ແດ່.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 이 운동화는 얼마예요? ເກີບກິລາຄູ່ນີ້ລາຄາເທົ່າໃດ?
2. 리한 씨는 얼마를 주고 샀어요? ຣິຮັນ ຊື້ໃນລາຄາເທົ່າໃດ?

정답 1. 오만 오천 원이에요. 2. 오만 원을 주고 샀어요.

### 단위 명사 2 ຫົວໜ່ວຍຂອງຄຳນາມ 2

- 정장 (ຊຸດສາກົນ), 한복 (ຊຸດປະຈຳຊາດເກົາຫຼີ): 벌 ເປັນຊຸດ (한 벌, 두 벌, 세 벌, …) (1 ຊຸດ, 2 ຊຸດ, 3 ຊຸດ….)
- 운동화 (ເກີບກິລາ), 장갑 (ຖົງມື), 양말 (ຖົງຕີນ): 켤레 ເປັນຄູ່ (한 켤레, 두 켤레, 세 켤레, …) (1 ຄູ່, 2 ຄູ່, 3 ຄູ່….)
- 텔레비전 (ໂທລະທັດ), 냉장고 (ຕູ້ເຢັນ), 자동차 (ລົດ): 대 ເປັນເຄື່ອງ, ເປັນຄັນ (한 대, 두 대, 세 대, …) (1 ເຄື່ອງ, 2 ເຄື່ອງ, 3 ເຄື່ອງ….)
- 사람 (ຄົນ), 어린이 (ເດັກນ້ອຍ), 학생 (ນັກຮຽນ), 친구 (ເພື່ອນ): 명 ເປັນຄົນ (한 명, 두 명, 세 명, …) (1 ຄົນ, 2 ຄົນ, 3 ຄົນ…)
- 할아버지 (ພໍ່ເຖົ້າ,), 할머니 (ແມ່ເຖົ້າ,), 손님 (ລູກຄ້າ): 분 ສຸພາບ (1 ຄົນ, 2 ຄົນ, 3 ຄົນ….) (한 분, 두 분, 세 분, …)
- 고양이 (ແມວ), 강아지 (ໝານ້ອຍ), 생선 (ປາ): 마리 ເປັນໂຕ (1 ໂຕ, 2 ໂຕ, 3 ໂຕ ….) (한 마리, 두 마리, 세 마리, …)



ນອກຈາກນັ້ນ ກໍຍັງມີຮູບ, ສະແຕັມ, ບັດ, ປີ້ ແລະ ອື່ນໆ ຫົວໜ່ວຍຂອງຄຳນາມ ຈະໃຊ້ເປັນ '장' ແລະ ປຶ້ມ, ປຶ້ມວັດຈະນານຸກົມ, ວາລະສານ ແລະ ອື່ນໆ. ຫົວໜ່ວຍຂອງຄຳນາມແມ່ນໃຊ້ເປັນ '권' ນອກຈາກນີ້ ຫົວໜ່ວຍຂອງຄຳນາມ 'ບິກ' ຈະມີຫົວໜ່ວຍເປັນ '자루', ຫົວ ໜ່ວຍຄຳນາມຂອງຕົ້ນໄມ້ຈະໃຊ້ເປັນ '그루'.

## 어휘 2 ຄຳສັບ 2 화폐와 물품 구매 ເງິນຕາ ແລະ ການຊື້ສິ່ງຂອງ

ພວກເຮົາມາຮຽນຮູ້ສຳນວນ ກ່ຽວກັບການຊື້ວັດຖຸສິ່ງຂອງ ແລະ ວິທີການຊື້ສິ່ງຂອງນັ້ນມີ ຫຍັງແດ່ນຳກັນເບິ່ງບໍ?

| | | | |
|---|---|---|---|
| 돈(현금)<br>ເງິນ (ເງິນສົດ) | 동전<br>ເງິນຫຼຽນ | 지폐<br>ເງິນເຈ້ຍ | 신용카드<br>ບັດທະນາຄານ |
| 값(가격)<br>ລາຄາ | 싸다<br>ຖືກ | 비싸다<br>ແພງ | (값을) 깎다<br>ຫຼຸດລາຄາ |
| 넣다<br>ວາງ, ໃສ່ | 싸다(포장하다)<br>ຫໍ່ | 바꾸다(교환하다)<br>ປ່ຽນ (ແລກປ່ຽນ) | 환불하다<br>ຖອນເງິນຄືນ |



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림을 보고 알맞은 단어를 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.




정답 ①㉡ ②㉢ ③㉣ ④㉠

## 문법 2 ໄວຍາກອນ 2 -아/어 주세요



'-아/어 주세요' ມັນຖືກໃຊ້ຕື່ມທ້າຍຄຳກຳມະ ເພື່ອຂໍຮ້ອງ ຫຼື ໃຫ້ຄົນອື່ນກະທຳບາງສິ່ງບາງຢ່າງໃຫ້.

| ㅏ, ㅗ → **-아 주세요** | ຈຳພວກສະຫຼະ ㅓ, ㅜ, ㅣ → **-어 주세요** | 하다 → **해 주세요** |
|---|---|---|
| 오다 → **와 주세요** | 읽다 → 읽**어 주세요** | 요리하다 → 요리**해 주세요** |

ໃນກໍລະນີທີ່ເຮົາສະເໜີຢາກຈະຊ່ວຍກະທຳບາງສິ່ງບາງຢ່າງໃຫ້ແກ່ອີກຝ່າຍໜຶ່ງ ເຮົາໃຊ້ '-아/어 드릴까요?'. ສ່ວນຄູ່ສົນທະນາກໍໃຫ້ໃຊ້ຄຳວ່າ '-아/어 주세요.' ເພື່ອຕອບຮັບອະນຸຍາດໃຫ້ເຮົາລົງມືກະທຳສິ່ງນັ້ນ.

· 너무 더워요. 창문을 좀 **열어 주세요**. (ອາກາດ) ຮ້ອນຫຼາຍ. ເປີດປະຕູໃຫ້ແດ່.
· 이 빵을 봉투에 좀 **넣어 주세요**. ເອົາເຂົ້າຈີ່ນີ້ໃສ່ຖົງໃຫ້ແດ່.
· 가: 가방을 들어 드릴까요? ໃຫ້ (ຂ້ອຍ) ຖືກະເປົາຊ່ວຍບໍ?
  나: 네, **들어 주세요**. 고맙습니다. ເຈົ້າ, ຖືຊ່ວຍແດ່.ຂອບໃຈ.



ເຂົ້າໃຈການໃຊ້ '-아/어 주세요' ແລ້ວບໍ? ສະນັ້ນ ຈົ່ງລອງຕື່ມໃສ່ປະໂຫຍກຕໍ່ໄປນີ້ໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.

2. 〈보기〉처럼 '-아/어 주세요'를 사용해서 문장을 완성하세요.
ຈົ່ງຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ໂດຍການໃຊ້ '-아/어 주세요' ຄືດັ່ງຕົວຢ່າງ.

보기 운동화를 환불하다 → 운동화를 환불해 주세요.
ສົ່ງເກີບກິລາຄືນ (ຄືນໃຫ້ຮ້ານແລ້ວເອົາເງິນຄືນ) → ກະລຸນາຄືນເງິນຄ່າເກີບກິລາຄູ່ນີ້ໃຫ້ຂ້ອຍແດ່.

1) 봉투에 넣다 → 봉투에 ______________.
2) 이 빵을 포장하다 → 이 빵을 ______________.
3) 이 우유를 바꾸다 → 이 우유를 ______________.
4) 아침에 전화하다 → 아침에 ______________.
5) 음식을 만들다 → 음식을 ______________.

정답 1) 넣어 주세요 2) 포장해 주세요 3) 바꿔 주세요 4) 전화해 주세요 5) 만들어 주세요

### 유용한 표현 ສຳນວນທີ່ສຳຄັນ

주말 잘 지내셨어요? ມີຄວາມສຸກກັບວັນພັກທ້າຍອາທິດບໍ?

가: **주말 잘 지내셨어요?** ມີຄວາມສຸກກັບວັນພັກທ້າຍອາທິດບໍ?
나: 네, 고향 친구를 만나서 재미있게 놀았어요. ເຈົ້າ, ພົບເພື່ອນ ແລ້ວກໍສ້າງສັນກັນຕາມພາສາໝູ່ເພື່ອນດ້ວຍກັນ.



## 활동 ກິດຈະກຳ

〈보기〉처럼 친구와 이야기해 보세요. ຈົ່ງລອງສ້າງບົດສົນທະນາກັບໝູ່ເພື່ອນ ຄືດັ່ງຕົວຢ່າງ.

보기 ຕົວຢ່າງ

주인: 어서 오세요. ເຊີນເຂົ້າມາໃນພໍ້.
손님: 사과 있어요? ມີໝາກແອັບເປິ້ນບໍ?
주인: 네, 있어요. ເຈົ້າ, ມີ.
손님: 얼마예요? ລາຄາເທົ່າໃດ?
주인: 천 원이에요. ພັນ ວອນ.
손님: 다섯 개 주세요. ເອົາໃຫ້ ຫ້າ ໜ່ວຍແດ່.





ໄດ້ສ້າງບົດສົນທະນາຄືກັບຕົວຢ່າງແລ້ວບໍ? ຫຼັງຈາກນັ້ນ ຈົ່ງຕອບຄຳຖາມລຸ່ມນີ້ລອງເບິ່ງ.

✚ 알맞은 말에 ✔하세요. ຈົ່ງຕື່ມເຄື່ອງໝາຍ ✔ ໃສ່ຄຳເວົ້າທີ່ເໝາະສົມ.

| | | |
|---|---|---|
| (1) 무엇을 샀어요?<br>ໄດ້ຊື້ຫຍັງ? | ☐ 수박<br>ໝາກແຕງໂມ | ☐ 사과<br>ໝາກແອັບເປິ້ນ |
| (2) 한 개에 얼마예요?<br>ໜ່ວຍໜຶ່ງ ລາຄາເທົ່າໃດ? | ☐ 1,000원<br>ພັນ ວອນ | ☐ 2,000원<br>ສອງພັນ ວອນ |
| (3) 몇 개를 샀어요?<br>ໄດ້ຊື້ຈັກໜ່ວຍ? | ☐ 4개<br>4 ໜ່ວຍ | ☐ 5개<br>5 ໜ່ວຍ |

정답 (1) 사과 (2) 1,000원 (3) 5개



## 정보 ຂໍ້ມູນທົ່ວໄປ

# 의류
ເສື້ອຜ້າ



치마
ກະໂປ່ງ



바지
ໂສ້ງ



티셔츠
ເສື້ອເຊີດ



잠바
ເສື້ອກັນໜາວ

입다 ນຸ່ງ



운동화
ອອກກຳລັງກາຍ



구두
ເກີບ



슬리퍼
ເກີບແຕະ



장화
ເກີບບູດ

신다 ສຸບ (ສຸບເກີບ)



양말
ຖົງຕີນ
신다



장갑
ຖົງມື
끼다



목도리
ຜ້າພັນຄໍ
하다



모자
ໝວກ

쓰다



넥타이
ກາລະວັດ
매다



가방
ກະເປົາ, ຖົງ
메다



안경
ແວ່ນຕາ
쓰다



선글라스
ແວ່ນກັນແດດ
쓰다



# EPS-TOPIK 듣기 ພາກຟັງ EPS-TOPIK



ສຳລັບຂໍ້ທີ 1 ແລະ 2 ແມ່ນຄຳຖາມ ປະເພດຄຳສັບທີ່ກ່ຽວກັບໝາກໄມ້, ເສື້ອຜ້າ ແລະ ເຄື່ອງນຸ່ງ. ໃນຂໍ້ທີ 3 ຈະແມ່ນຖາມກ່ຽວກັບຈຳນວນຂອງໝີ່, ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເລືອກ ເອົາຮູບພາບທີ່ຖືກຕ້ອງ.

[1~3] 잘 듣고 내용과 관계있는 그림을 고르십시오.

ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເລືອກເອົາຮູບທີ່ກ່ຽວຂ້ອງກັບເນື້ອໃນ.






ຕໍ່ໄປນີ້ແມ່ນເລືອກຕອບເອົາຄຳຖາມທີ່ຖືກຕ້ອງ, ກ່ອນຈະຟັງຄຳຖາມນີ້ ຈົ່ງກວດຄືນເບິ່ງເນື້ອໃນຂອງຄຳຕອບສາກ່ອນ.

[4~5] 질문을 듣고 알맞은 대답을 고르십시오.

ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

4. ① 사과예요. ② 5개 주세요.
   ③ 1,000원이에요. ④ 사과가 많아요.

5. ① 우유예요. ② 우유 주세요.
   ③ 여기 있어요. ④ 여기에서 마셔요.

### 듣기 대본 ເນື້ອໃນບົດຟັງ

1. 남: 수박 ໝາກແຕງໂມ
2. 여: 물 ນ້ຳດື່ມ
3. 남: 라면 두 개 ໝີ່ ສອງຫໍ່
4. 여: 이 사과 얼마예요? ໝາກແປັບເປິ້ນນີ້ ລາຄາເທົ່າໃດ?
5. 남: 뭘 드릴까요? ຕ້ອງການຫຍັງບໍ?

정답 1. ④ 2. ① 3. ② 4. ③ 5. ②

## 확장 연습 ບົດເຝິກຫັດເພີ່ມເຕີມ

L-11

1. 잘 듣고 내용과 관계있는 그림을 고르십시오. ຟັງເນື້ອໃນໃຫ້ດີໆແລ້ວເລືອກເອົາຮູບທີ່ຖືກຕ້ອງ.

① 

② 

③ 

④ 

2. 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

① 조금 매워요.
② 라면 주세요.
③ 저쪽에 앉아요.
④ 식당에서 먹어요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 장갑 세 켤레 주세요. ເອົາຖົງມືໃຫ້ 3 ຄູ່ ແດ່.
2. 남: 뭐 드릴까요? ຕ້ອງການຫຍັງບໍ?

정답 1. ① 2. ②



## EPS-TOPIK 읽기 ພາກອ່ານ EPS-TOPIK



ສຳລັບຂໍ້ທີ 1 ແມ່ນຄຳສັບທີ່ຖາມກ່ຽວຂ້ອງກັບເງິນຕາ ແລະ ຂໍ້ທີ 2 ແມ່ນຄຳສັບທີ່ຖາມກ່ຽວຂ້ອງກັບໝາກ ໄມ້, ໃນຂໍ້ທີ 3 ແມ່ນເບິ່ງກ່ຽວກັບລາຄາ, ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

[1~3] 다음 그림을 보고 맞는 단어나 문장을 고르십시오.

ຈົ່ງເບິ່ງຮູບພາບ ແລ້ວເລືອກເອົາຄຳສັບ ຫຼື ປະໂຫຍກທີ່ຖືກຕ້ອງກັບຮູບພາບນັ້ນ.

1.

① 돈　　② 물
③ 주스　　④ 카드

2.

① 포도　　② 수박
③ 사과　　④ 오렌지

3.

① 싸요.　　② 비싸요.
③ 있어요.　　④ 없어요.



ຄຳຖາມຕໍ່ໄປນີ້ແມ່ນໃຊ້ຖາມໃນເວລາທີ່ຊື້ສິ່ງຂອງຕ່າງໆ, ຈົ່ງຄິດທົບທວນຄືນບົດຮຽນທີ່ຮຽນຜ່ານມາ ແລ້ວຕອບ ຄຳຖາມລຸ່ມນີ້.

[4~5] 빈칸에 들어갈 가장 알맞은 것을 고르십시오.

ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

4.

가: 이 오렌지 __________ 예요?
나: 이천 원이에요.

① 얼마　　② 누구　　③ 어디　　④ 언제

5.

가: 이 운동화는 오만 오천 원이에요. ເກີບກິລາຄູ່ນີ້ລາຄາ ຫ້າສິບຫ້າພັນວອນ.
나: 좀 비싸요. __________. ຂ້ອນຂ້າງແພງ. ກະລຸນນາຫຼຸດລາຄາໃຫ້ແດ່.
가: 알았어요. 오만 원 주세요. ເຈົ້າ, ຊັ້ນເອົາມາຫ້າສິບພັນວອນ.

① 넣어 주세요　　② 바꿔 주세요　　③ 깎아 주세요　　④ 포장해 주세요

정답 1. ① 2. ③ 3. ② 4. ① 5. ③



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 다음 그림을 보고 맞는 표현을 고르십시오. ຈົ່ງເບິ່ງຮູບພາບດັ່ງຕໍ່ໄປນີ້ ແລ້ວເລືອກເອົາສຳນວນທີ່ຖືກຕ້ອງ.

1. 

① 안경　② 목도리
③ 양말　④ 티셔츠

2. 

① 구두　② 슬리퍼
③ 장화　④ 운동화

3. 

① 넥타이를 매요.　② 넥타이를 신어요.
③ 넥타이를 써요.　④ 넥타이를 입어요.

[4~6] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

4.

가: 이 빵은 얼마예요? ເຂົ້າຈີ່ອັນນີ້ ລາຄາທໍໃດເທົ່າໃດ?
나: ______________________.

① 열 개 있어요.　② 천 원이에요.
③ 우유도 있어요.　④ 빵이 맛있어요.

5.

가: 뭘 드릴까요? ຕ້ອງການຫຍັງບໍ?
나: ______________________.

① 환불해 주세요.　② 좀 깎아 주세요.
③ 사과 4개 주세요.　④ 봉투에 넣어 주세요.

6.

가: 그 과자는 어디에서 샀어요? ເຂົ້າໜົມນັ້ນ ໄດ້ຊື້ຢູ່ໃສ?
나: ______________________.

① 어제 샀어요.　② 한 개 샀어요.
③ 현금으로 샀어요.　④ 마트에서 샀어요.

정답 1. ① 2. ④ 3. ① 4. ② 5. ③ 6. ④

# 12 병원 옆에 약국이 있어요

ຮ້ານຂາຍຢາ ຢູ່ຂ້າງໂຮງໝໍ

**학습 안내**
ຄຳແນະນຳ ໃນການຮຽນ

- ☐ ຈຸດປະສົງໃນການຮຽນ — ການຊອກຫາ ທີ່ຕັ້ງ ແລະ ເສັ້ນທາງ
- ☐ ໄວຍາກອນ — -(으)세요, (으)로
- ☐ ຄຳສັບ ແລະ ສຳນວນຄຳເວົ້າ — ຄຳກຳມະກ່ຽວກັບການເຄື່ອນໄຫວ, ທີ່ຕັ້ງ ແລະ ທິດທາງ
- ☐ ຂໍ້ມູນກ່ຽວກັບວັດທະນາທຳ — ເສັ້ນທາງ



## 대화 1 ບົດສົນທະນາ 1






ຕວນ ກຳລັງຖາມຫາທີ່ຕັ້ງຂອງທະນາຄານ. ກ່ອນອື່ນ, ຟັງບົດສົນທະນາ 2 ຄັ້ງ ວ່າທັງສອງຄົນກຳລັງລົມຫຍັງກັນ ແລ້ວເວົ້າຕາມ.

투안 이 건물에 은행이 있어요?
ຢູ່ຕຶກນີ້ ມີທະນາຄານບໍ?

여자 네, 있어요.
ເຈົ້າ, ມີ.

투안 은행이 어디에 있어요?
ທະນາຄານຢູ່ໃສ?

여자 지하 1층에 있어요.
ຢູ່ຊັ້ນໃຕ້ດິນຊັ້ນທີ 1.

지하로 내려가세요.
ກະລຸນາລົງໄປຊັ້ນໃຕ້ດິນ.

> 지하 ໃຕ້ດິນ
> · 은행이 지하에 있어요?
> ທະນາຄານຢູ່ຊັ້ນໃຕ້ດິນບໍ?
> · 식당이 지하 1층에 있어요?
> ຮ້ານອາຫານຢູ່ຊັ້ນໃຕ້ດິນຊັ້ນທີໜຶ່ງບໍ?

> N이/가 어디에 있어요?
> ຄຳນາມ 이/가 ຢູ່ໃສ?
> ສຳນວນທີ່ໃຊ້ເວລາຖາມກ່ຽວກັບທີ່ຕັ້ງ ສຳລັບຄຳນາມທີ່ລົງທ້າຍດ້ວຍ ພະຍັນຊະນະ ແມ່ນໃຊ້ 'ຄຳນາມ 이 어디에 있어요?', ສຳລັບຄຳນາມທີ່ລົງທ້າຍດ້ວຍສະຫຼະ ແມ່ນໃຊ້ 'N가 어디에 있어요?'.
> · 병원이 어디에 있어요?
> ໂຮງໝໍແມ່ນຢູ່ໃສ?



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 투안 씨는 어디에 가요? ຕວນ ໄປໃສ?
2. 은행이 어디에 있어요? ທະນາຄານຢູ່ໃສ?

정답 1. 은행에 가요. 2. 지하에 있어요./지하 1층에 있어요.



##  어휘 1 ຄຳສັບ 1 — 이동 동사 ຄຳກຳມະທີ່ສະແດງການເຄື່ອນໄຫວ



ພວກເຮົາມາລອງເບິ່ງວ່າ ຄຳກຳມະທີ່ສະແດງເຖິງການເຄື່ອນໄຫວ ໃນພາສາເກົາຫຼີມີຫຍັງແດ່.



내려가다
ລົງໄປ



내려오다
ລົງມາ



올라가다
ຂຶ້ນໄປ



올라오다
ຂຶ້ນມາ



나가다
ອອກໄປ



나오다
ອອກມາ



들어가다
ເຂົ້າໄປ



들어오다
ເຂົ້າມາ



돌아가다
ກັບໄປ



돌아오다
ກັບມາ, ກັບຄືນມາ

- 옥상에 **올라가면** 카페가 있어요.
  ຖ້າຂຶ້ນໄປດາດຟ້າ ຈະມີຮ້ານ ກາເຟ.
- 잠깐 **나가** 주세요. ກະລຸນາອອກໄປບຶດໜຶ່ງກ່ອນ.
- 내일 고향에 **돌아가요**. ມື້ອື່ນ ຂ້ອຍຈະກັບໄປບ້ານເກີດ.
- 3월에 동생이 미국에서 **돌아와요**.
  ເດືອນ 3, ນ້ອງສາວຈະກັບມາຈາກ ອາເມລິກາ.



ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

1. 그림을 보고 알맞은 단어를 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.



① 

② 

③ 

④ 

㉠ 나가다 ㉡ 들어가다 ㉢ 내려가다 ㉣ 올라가다



정답 ①㉢ ②㉣ ③㉠ ④㉡

## 문법 1 ໄວຍາກອນ 1 -(으)세요




'-(으)세요' ມັນຖືກໃຊ້ໃນເວລາທີ່ຕ້ອງການຮ້ອງຂໍສິ່ງໃດໜຶ່ງ ຫຼື ສັ່ງໃຫ້ອີກຝ່າຍເຮັດສິ່ງນັ້ນ. ມັນສາມາດໃຊ້ໄດ້ແຕ່ກັບຄຳກຳມະເທົ່ານັ້ນ. ມີຄວາມໝາຍວ່າ 'ເຊີນ- / ກະລຸນາ-'.

| 자음(ພະຍັນຊະນະ) → **-으세요** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-세요** |
|---|---|
| 읽다 → 읽**으세요** | 기다리다 → 기다리**세요**<br>만들다 → 만드**세요** |

· 여기에 **앉으세요**. ເຊີນນັ່ງຢູ່ນີ້.
· 노이 씨, 빨리 **오세요**. ນ້ອຍ, ກະລຸນາມາໄວໆແດ່.
· 잠깐만 **기다리세요**. ກະລຸນາລໍຖ້າບຶດໜຶ່ງ.



### 비교해 보세요 ຈົ່ງປຽບທຽບເບິ່ງ

**✓ ລະຫວ່າງ '-(으)세요' ກັບ '-아/어 주세요'**

'-(으)세요' ກັບ '-아/어 주세요' ມັນຖືກໃຊ້ເພື່ອອອກຄຳສັ່ງ ຫຼື ຮ້ອງຂໍໃຫ້ອີກຝ່າຍໜຶ່ງກະທຳສິ່ງໃດສິ່ງໜຶ່ງ. ໂດຍທົ່ວໄປແລ້ວ '-(으)세요' ແມ່ນມັກໃຊ້ໃນເວລາອອກຄຳສັ່ງ, ສ່ວນ '-아/어 주세요' ແມ່ນມັກໃຊ້ໃນເວລາທີ່ຮ້ອງຂໍໃຫ້ອີກຝ່າຍໜຶ່ງຊ່ວຍກະທຳສິ່ງໃດສິ່ງໜຶ່ງໃຫ້.

· 창문을 **닫으세요**. (ຄຳສັ່ງ)
· 창문을 **닫아 주세요**. (ຂໍຮ້ອງ)



ເຂົ້າໃຈການນຳໃຊ້ '-(으)세요' ແລ້ວບໍ? ຈົ່ງໃຊ້ສຳນວນທີ່ຖືກຕ້ອງ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ.

**2. 그림을 보고 <보기>처럼 '-(으)세요'를 사용해서 대화를 완성하세요.**
ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການນຳໃຊ້ ໄວຍາກອນ '-(으)세요' ດັ່ງຕົວຢ່າງ.

보기
가: 이 건물에 약국이 있어요?
ມີຮ້ານຂາຍຢາຢູ່ຕຶກນີ້ບໍ?
나: 지하 1층에 있어요.
ມີຢູ່ຊັ້ນໃຕ້ດິນຊັ້ນທີ 1.
저쪽으로 내려가세요.
ກະລຸນາ ຍ່າງລົງໄປທາງນັ້ນ.




1) 가: 이 건물에 은행이 있어요?
나: 네, 2층에 있어요.
저 계단으로 ________________.

2) 가: 이 건물에 편의점이 있어요?
나: 네, 3층에 있어요.
3층으로 ________________.

3) 가: 이 건물에 우체국이 있어요?
나: 우체국은 밖에 있어요.
밖으로 ________________.

정답 1) 올라가세요 2) 올라가세요 3) 나가세요

## 대화 2 ບົດສົນທະນາ 2

Track 41



ຊູຣູ ກຳລັງຊອກຫາຮ້ານຂາຍຢາ. ກ່ອນອື່ນ, ຟັງບົດສົນທະນາ 2 ຄັ້ງ ແລ້ວເວົ້າຕາມ.

수루　이 근처에 약국이 있어요?
ມີຮ້ານຂາຍຢາຢູ່ແຖວນີ້ບໍ?

남자　네, 있어요.
ເຈົ້າ, ມີ.

수루　약국이 어디에 있어요?
ຮ້າຍຂາຍຢາຢູ່ໃສ?

남자　저 사거리에서 오른쪽으로 가세요.
ຮອດສີ່ແຍກນັ້ນແລ້ວລ້ຽວໄປທາງເບື້ອງຂວາ.
그러면 병원 옆에 약국이 있어요.
ຫຼັງຈາກນັ້ນ ຮ້ານຂາຍຢາແມ່ນຢູ່ຂ້າງໂຮງໝໍ.

**근처** ໃກ້, ບໍລິເວນ (ແຖວ)

- 우리 집 근처에 은행이 있어요.
  ມີທະນາຄານຢູ່ໃກ້ເຮືອນພວກເຮົາ.
- 영화관 근처에서 친구를 만났어요.
  ຂ້ອຍໄດ້ພົບກັບໝູ່ຢູ່ບໍລິເວນໂຮງໜັງ.

**그러면** ຫຼັງຈາກນັ້ນ

ໃຊ້ໃນເວລາທີ່ເນື້ອໃນຂອງປະໂຫຍກທາງໜ້າ ເປັນເງື່ອນໄຂໃຫ້ ເນື້ອໃນຂອງປະໂຫຍກຫຼັງ.

- 1층으로 내려오세요.
  그러면 식당이 있어요.
  ລົງມາຊັ້ນ 1. ຫຼັງຈາກນັ້ນຈະມີຮ້ານອາຫານຢູ່.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 수루 씨는 어디에 가요? ຊູຣູ ໄປໃສ?
2. 약국은 어디에 있어요? ຮ້ານຂາຍຢາຢູ່ໃສ?

정답　1. 약국에 가요.　2. 병원 옆에 있어요.






앞으로 가세요.
ໄປທາງໜ້າ.



뒤로 가세요.
ໄປທາງຫຼັງ.



오른쪽으로 가세요.
ໄປທາງຂວາ.



왼쪽으로 가세요.
ໄປທາງຊ້າຍ.



위로 올라가세요.
ຂຶ້ນໄປເທິງ.



아래로 내려가세요.
ລົງໄປລຸ່ມ.



## 어휘 2 ຄຳສັບ 2　위치와 방향 ທີ່ຕັ້ງ ແລະ ທິດທາງ



ລອງມາເບິ່ງວ່າຄຳສັບກ່ຽວກັບທີ່ຕັ້ງ ແລະ ທິດທາງມີຄືແນວໃດ.






ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?



1. 그림을 보고 〈보기〉처럼 문장을 완성하세요. ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.

보기

가방이 의자 위에 있어요. ກະເປົາຢູ່ເທິງຕັ່ງ.

1) 차가 회사 ____________에 있어요.

2) 차가 회사 ____________에 있어요.

3) 약국이 백화점 ____________에 있어요.

4) 약국이 식당 ____________에 있어요.

정답 1) 앞　2) 뒤　3) 안　4) 옆/오른쪽

## 문법 2 ໄວຍາກອນ 2 (으)로

G12-2

'(으)로' ມັນຖືກໃຊ້ຕື່ມທ້າຍຄຳນາມ ເພື່ອຊີ້ບອກເຖິງຈຸດປະສົງ ຫຼື ທິດທາງຂອງການເຄື່ອນຍ້າຍ.

| 자음(ພະຍັນຊະນະ) + **으로** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' + **로** |
|---|---|
| 한국**으로** | 위**로**<br>서울**로** |

· 가: 화장실이 어디에 있어요? ຫ້ອງນ້ຳຢູ່ໃສ?
  나: 사무실 옆에 있어요. **오른쪽으로** 가세요. ຢູ່ຂ້າງຫ້ອງການ. ໄປທາງເບື້ອງຂວາ
· 가: 약국이 어디에 있어요? ຮ້ານຂາຍຢາຢູ່ໃສ?
  나: 2층에 있어요. **위로** 올라가세요. ຢູ່ຊັ້ນ 2. ຂຶ້ນໄປຊັ້ນເທິງເດີ.



ເຂົ້າໃຈການນຳໃຊ້ '(으)로' ແລ້ວບໍ? ຈົ່ງເບິ່ງຮູບພາບ ແລ້ວໃຊ້ສຳນວນທີ່ຖືກຕ້ອງເພື່ອເຮັດໃຫ້ບົດສົນທະນາຄົບຖ້ວນ.

2. 그림을 보고 〈보기〉처럼 '(으)로'를 사용해서 문장을 완성하세요.
ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ໂດຍນຳໃຊ້ໄວຍາກອນ '(으)로' ຄືດັ່ງຕົວຢ່າງ.

보기



앞으로 가세요. ກະລຸນາ ໄປທາງໜ້າ.

1)  ________ 가세요.

2)  ________ 가세요.

3)  ________ 가세요.

4)  ________ 올라가세요.

5)  ________ 내려가세요.

정답 1) 뒤로 2) 오른쪽으로 3) 왼쪽으로 4) 위로 5) 아래로



### 유용한 표현 ສຳນວນທີ່ສຳຄັນ

**먼저 들어가세요.** ກະລຸນາ ກັບ (ກັບບ້ານ) ກ່ອນ.

가: 퇴근 시간인데 집에 안 가요? ໂມງເລີກວຽກແລ້ວ, ບໍ່ກັບບ້ານບໍ?
나: 네, **먼저 들어가세요.** 저는 공구 정리 좀 하고 들어갈게요.
ເຈົ້າ, **ກະລຸນາກັບກ່ອນໂລດ.** ຂ້ອຍຈະຈັດເຄື່ອງມືອີກຈັກໜ່ອຍ ແລ້ວຈຶ່ງຈະກັບ.



## 활동 ກິດຈະກຳ

그림을 보고 〈보기〉처럼 친구와 이야기해 보세요.
ຈົ່ງເບິ່ງຮູບພາບ ແລ້ວລອງສົນທະນາກັບໝູ່ຄືດັ່ງຕົວຢ່າງ.

보기 ຕົວຢ່າງ

가: 약국이 어디에 있어요? ຮ້ານຂາຍຢາຢູ່ໃສ?

나: 이 사거리에서 오른쪽으로 가세요. ລ້ຽວໄປທາງເບື້ອງຂວາ ຢູ່ສີ່ແຍກນີ້.

그러면 병원 옆에 약국이 있어요.
ຫຼັງຈາກນັ້ນ ຮ້ານຂາຍຢາແມ່ນຢູ່ຂ້າງໂຮງໝໍ.






ເບິ່ງແຜນທີ່ຂ້າງເທິງແລ້ວລອງຕອບຄຳຖາມດັ່ງຕໍ່ໄປນີ້.

✚ 알맞은 말에 ✓하세요. ຈົ່ງຕື່ມເຄື່ອງໝາຍ ✓ ໃສ່ຄຳເວົ້າທີ່ເໝາະສົມ.

(1) 은행 옆에 ☐ 약국이 있어요. ☐ 우체국이 있어요.

(2)약국 옆에 ☐ 병원이 있어요. ☐ 마트가 있어요.

(3)병원 건너편에 ☐ 은행이 있어요. ☐ 학교가 있어요.

정답 (1) 우체국이 있어요. (2) 병원이 있어요. (3) 은행이 있어요.



## 정보 ຂໍ້ມູນທົ່ວໄປ

# 길거리

ຫົນທາງ

육교
ຂົວຂ້າມທາງ

이정표
ປ້າຍຈະລາຈອນ

신호등
ໄຟຈະລາຈອນ (ໄຟແດງ)

역삼사거리

횡단보도
ທາງມ້າລາຍ

길
ເສັ້ນທາງ

골목
ຮອມ

도로
ຖະໜົນ



## EPS-TOPIK 듣기 ພາກຟັງ **EPS-TOPIK**



ຂໍ້ 1 ຫາ 2 ແມ່ນ ຄຳຖາມກ່ຽວກັບການເລືອກຄຳສັບທີ່ສະແດງເຖິງທີ່ຕັ້ງ; ຂໍ້ 3 ແມ່ນຄຳຖາມກ່ຽວກັບການເລືອກສຳນວນຄຳກຳມະການເຄື່ອນໄຫວ. ຈົ່ງຟັງ ແລະ ເລືອກເອົາຄຳຕອບທີ່ຖືກຕ້ອງ.

[1~3] 들은 것을 고르십시오. ຈົ່ງເລືອກເອົາຄຳຕອບທີ່ໄດ້ຍິນ.

Track 42

1. ① 위　② 옆　③ 안　④ 앞

2. ① 사이　② 왼쪽　③ 아래　④ 중간

3. ① 내려가세요　② 돌아가세요　③ 올라가세요　④ 들어가세요



ຕໍ່ໄປ ແມ່ນຄຳຖາມກ່ຽວກັບການຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ. ກ່ອນທີ່ຈະຟັງບົດສົນທະນາ, ລອງກວດເບິ່ງເນື້ອໃນຂອງຄຳຖາມເທື່ອໜຶ່ງກ່ອນ.

[4~5] 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ເໝາະສົມກັບແຕ່ລະຄຳຖາມ.

4. 은행은 어디에 있습니까? ທະນາຄານຢູ່ໃສ?
① 1층　② 2층
③ 지하 1층　④ 지하 2층

5. 약국은 어디에 있습니까? ຮ້ານຂາຍຢາຢູ່ໃສ?
① 병원 뒤　② 병원 옆
③ 병원 안　④ 병원 위



### 듣기 대본 ເນື້ອໃນບົດຟັງ

1. 여: 앞 ທາງໜ້າ
2. 남: 왼쪽 ເບື້ອງຊ້າຍ
3. 여: 들어가세요. ກະລຸນາເຂົ້າໄປທາງໃນ.
4. 남: 은행이 어디에 있어요? ທະນາຄານຢູ່ໃສ?
   여: 지하 1층에 있어요. ຢູ່ຊັ້ນໃຕ້ດິນ ຊັ້ນທີ 1.
5. 남: 약국이 어디에 있어요? ຮ້ານຂາຍຢາຢູ່ໃສ?
   여: 병원 옆에 있어요. ຢູ່ຂ້າງໂຮງໝໍ.

정답 1. ④ 2. ② 3. ④ 4. ③ 5. ②

## 확장 연습 ບົດເຝິກຫັດເພີ່ມເຕີມ

L-12

1. 들은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ໄດ້ຍິນ.

   ① 1층으로 올라오세요.
   ② 2층으로 올라가세요.
   ③ 1층으로 내려오세요.
   ④ 2층으로 내려가세요.

2. 커피숍은 어디에 있습니까? 맞는 것을 고르십시오. ຮ້ານກາເຟຢູ່ໃສ? ຈົ່ງເລືອກເອົາຄຳຕອບທີ່ຖືກຕ້ອງ.

   ① 서점 뒤에 있어요.
   ② 백화점 앞에 있어요.
   ③ 서점과 백화점 사이에 있어요.
   ④ 서점과 백화점 건너편에 있어요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 2층으로 올라가세요. ກະລຸນາຂຶ້ນໄປຊັ້ນ 2.
2. 남: 커피숍은 어디에 있어요? ຮ້ານກາເຟ ຢູ່ໃສ?
   여: 서점과 백화점 사이에 있어요. ຢູ່ລະຫວ່າງຮ້ານຂາຍປຶ້ມ ແລະ ຫ້າງຊັບພະສິນຄ້າ.

정답 1. ② 2. ③



### 유용한 표현 ສຳນວນທີ່ສຳຄັນ

덕분이에요. ຍ້ອນເຈົ້າ (ສະແດງຄວາມຂອບໃຈ).

가: 일을 아주 잘 하네요. ເຮັດວຽກດີຫຼາຍ.
나: 과장님 **덕분이에요.** ກໍເປັນຍ້ອນຫົວໜ້າຫັ້ນແຫຼະ.



# EPS-TOPIK 읽기 ພາກອ່ານ **EPS-TOPIK**



ຂໍ້ 1 ຫາ 3 ແມ່ນຄຳຖາມກ່ຽວກັບການເບິ່ງຮູບພາບ ແລ້ວເລືອກປະໂຫຍກຄຳຕອບທີ່ເໝາະສົມ. ຈົ່ງເລືອກປະໂຫຍກທີ່ຖືກຕ້ອງກັບຮູບພາບ.

[1~3] 다음 그림을 보고 알맞은 문장을 고르십시오.

ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1.

① 뒤로 가세요. ② 앞으로 가세요.
③ 옆으로 가세요. ④ 사이로 가세요.

2. 

① 가운데로 가세요. ② 왼쪽으로 가세요.
③ 오른쪽으로 가세요. ④ 건너편으로 가세요.

3. 

① 위로 올라가세요. ② 위로 내려가세요.
③ 아래로 올라가세요. ④ 아래로 내려가세요.



ຄຳຖາມຂໍ້ 4 ຫາ 5 ແມ່ນຄຳຖາມກ່ຽວກັບ ການເບິ່ງຮູບພາບແລ້ວເລືອກເອົາຄຳຕອບທີ່ເໝາະສົມ. ຈົ່ງລອງຄິດທົບທວນເຖິງສິ່ງທີ່ຮຽນມາ ແລ້ວຕອບຄຳຖາມ.

[4~5] 다음 그림을 보고 빈칸에 들어갈 가장 알맞은 것을 고르십시오.

ຈົ່ງເບິ່ງຮູບພາບດັ່ງຕໍ່ໄປນີ້ ແລ້ວ ເລືອກຄຳຕອບທີ່ຖືກຕ້ອງທີ່ສຸດໃສ່ບ່ອນຫວ່າງ.

4. 


가: 식당이 어디에 있어요? ຮ້ານອາຫານຢູ່ໃສ?
나: ________________.

① 1층에 있어요 ② 2층에 있어요
③ 지하 1층에 있어요 ④ 지하 2층에 있어요

5. 


가: 이 건물에 우체국이 있어요? ຢູ່ຕຶກນີ້ ມີໄປສະນີບໍ່?
나: ________________.

① 네, 있어요. 1층에 있어요 ② 네, 없어요. 건물 안에 있어요
③ 아니요, 있어요. 1층에 있어요 ④ 아니요, 없어요. 건물 밖에 있어요

정답 1. ② 2. ③ 3. ④ 4. ③ 5. ④



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 다음 그림을 보고 맞는 표현을 고르십시오. ຈົ່ງເບິ່ງຮູບພາບດັ່ງຕໍ່ໄປນີ້ ແລ້ວເລືອກເອົາສຳນວນທີ່ຖືກຕ້ອງ.

1.



① 뒤로 가세요. ② 앞으로 가세요.
③ 왼쪽으로 가세요. ④ 오른쪽으로 가세요.

2.



① 앞으로 가세요. ② 위로 올라가세요.
③ 옆으로 가세요. ④ 아래로 내려가세요.

3.



① 집에 들어가요. ② 집에서 나가요.
③ 집에 돌아와요. ④ 집에서 나와요.

[4~6] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

4.




가: 꽃집이 어디에 있어요? ຮ້ານຂາຍດອກໄມ້ຢູ່ໃສ?
나: ______________.

① 서점 옆에 있어요 ② 병원 아래에 있어요
③ 우체국 뒤에 있어요 ④ 편의점 앞에 있어요

5.

무단 횡단을 하면 매우 ______________. 그러므로 길을 건널 때는 횡단보도를 이용하는 것이 안전합니다.
ຖ້າຂ້າມທາງແບບບໍ່ຖືກກົດໝາຍ ແມ່ນອັນຕະລາຍຫຼາຍ. ສະນັ້ນ ການໃຊ້ທາງມ້າລາຍໃນເວລາຂ້າມທາງ ແມ່ນປອດໄພ.

① 답답합니다 ② 복잡합니다
③ 불편합니다 ④ 위험합니다

정답 1. ③ 2. ② 3. ② 4. ① 5. ④




# 시청 앞에서 일곱 시에 만나요
ພົບກັນເວລາ 7 ໂມງ ຢູ່ຕໍ່ໜ້າສາລາກາງ

**학습 안내** ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການສ້າງການນັດໝາຍທາງດ້ານເວລາ ແລະ ສະຖານທີ່ |
| □ ໄວຍາກອນ | -고 싶다, -(으)ㄹ까요 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ຄຳກຳມະທີ່ສະແດງສະຖານະພາບ 1<br>ຄຳກຳມະທີ່ສະແດງສະຖານະພາບ 2 |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ຄົນເກົາຫຼີ ຖືວ່າການນັດໝາຍ ເປັນພາກສ່ວນໜຶ່ງຂອງການທັກທາຍ |



## 대화 1 ບົດສົນທະນາ 1

Track 43



ຕວນ ແລະ ຊູຣູ ກຳລັງສ້າງການນັດໝາຍ. ກ່ອນອື່ນຈົ່ງຟັງບົດສົນທະນາ ກ່ອນ 2 ຄັ້ງ ແລ້ວເວົ້າຕາມ.

**투안** 수루 씨, 내일 시간 있어요?
ຊູຣູ ມື້ອື່ນ ພໍມີເວລາບໍ?

**수루** 네, 시간 괜찮아요. 그런데 왜요?
ເຈົ້າ, ເວລາພໍມີ, ແຕ່ວ່າ ມີຫຍັງບໍ?

**투안** 우리 같이 영화 볼까요?
ພວກເຮົາ ໄປເບິ່ງໜັງນຳກັນບໍ?

**수루** 좋아요. 같이 영화 봐요.
ດີ, ພວກເຮົາໄປເບິ່ງໜັງນຳກັນ.

무슨 영화 볼까요?
ພວກເຮົາ ຈະເບິ່ງໜັງຫຍັງ?

**투안** 다 좋아요. 수루 씨는 뭐 보고 싶어요?
ແມ່ນຫຍັງກໍໄດ້, ຊູຣູເດ ຢາກເບິ່ງໜັງຫຍັງບໍ?

**수루** 코미디 영화를 보고 싶어요.
ຂ້ອຍ ຢາກເບິ່ງໜັງຕະຫຼົກ.

> **그런데 왜요?** ແຕ່ວ່າ ເປັນຫຍັງບໍ?
> ເປັນສຳນວນທີ່ໃຊ້ເຊື່ອມຕໍ່ກັບປະໂຫຍກໜ້າ ເພື່ອສອບຖາມເຫດຜົນ.
> · 내일은 바빠요. 그런데 왜요?
> ມື້ອື່ນ ຄາວຽກ. ແຕ່ວ່າມີຫຍັງບໍ?

> **무슨** ແມ່ນຫຍັງ
> ໃຊ້ວາງໃສ່ທາງໜ້າຂອງຄຳນາມ ເພື່ອສອບຖາມກ່ຽວກັບຄຳນາມນັ້ນ.
> · 무슨 음식을 잘 만들어요?
> ເຈົ້າແຕ່ງອາຫານຫຍັງເກັ່ງ?



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 수루 씨는 내일 시간이 있어요? ມື້ອື່ນ ຊູຣູ ມີເວລາບໍ?
2. 투안 씨는 내일 뭐 해요? ມື້ອື່ນ ຕວນເຮັດຫຍັງ?

정답 1. 네, 시간이 있어요./네, 시간이 괜찮아요. 2. 수루 씨하고 같이 영화를 봐요.



## 어휘 1 ຄຳສັບ 1 　 상태 1 ຄຳສັບທີ່ສະແດງສະຖານະ 1

ຄຳຄຸນນາມ ທີ່ສະແດງສະຖານະພາບນັ້ນ ວ່າມີຄຳໃດແດ່ ພວກເຮົາລອງໄປຮຽນຮູ້ນຳກັນເບິ່ງບໍ?

| | | | |
|---|---|---|---|
| 시간(이) 있다<br>ມີເວລາ | 시간(이) 없다<br>ບໍ່ມີເວລາ | 약속(이) 있다<br>ມີນັດ | 약속(이) 없다<br>ບໍ່ມີນັດ |
| 일이 많다<br>ວຽກຫຼາຍ | 일이 적다<br>ວຽກໜ້ອຍ | 바쁘다<br>ຫຍຸ້ງວຽກ | 한가하다<br>ຫວ່າງ |
| 재미있다<br>ໜ້າສົນໃຈ (ມ່ວນ) | 재미없다<br>ໜ້າເບື່ອ | 좋다<br>ດີ | 괜찮다<br>ໂອເຄ. ພໍໄດ້, ບໍ່ເປັນຫຍັງ |



ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

1. 그림을 보고 알맞은 단어를 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

① 　 ② 　 ③ 　 ④

㉠ 재미있다 　 ㉡ 재미없다 　 ㉢ 바쁘다 　 ㉣ 한가하다

정답 ①㉢ ②㉣ ③㉠ ④㉡



## 문법 1 ໄວຍາກອນ 1 -고 싶다

G13-1

'-고 싶다' ມັນຖືກໃຊ້ເພື່ອຊີ້ບອກເຖິງຄວາມຕ້ອງການ, ຄວາມມຸ່ງຫວັງ, ຄວາມປາຖະໜາຂອງຜູ້ເວົ້າ. ມັນໃຊ້ເປັນປະໂຫຍກຄຳຖາມເພື່ອຖາມເຖິງຄວາມຕ້ອງການ ຫຼື ຄວາມປາຖະໜາຂອງອີກຝ່າຍ. ມັນຖືກໃຊ້ຕື່ມທ້າຍຄຳກຳມະ ໂດຍບໍ່ໄດ້ຈຳແນກວ່າທ້າຍຄຳກຳມະມີຕົວສະກົດ ຫຼືບໍ່.

- 영화를 **보고 싶어요**. (ຂ້ອຍ) ຢາກເບິ່ງໜັງ.
- 가: 뭐 **먹고 싶어요**? (ເຈົ້າ) ຢາກກິນຫຍັງ?
  나: 비빔밥을 **먹고 싶어요**. (ຂ້ອຍ) ຢາກກິນບິບິມບັບ.



ເຂົ້າໃຈການໃຊ້ '-고 싶다' ແລ້ວບໍ? ຈົ່ງເບິ່ງຮູບພາບ ແລະ ຕື່ມໃສ່ປະໂຫຍກ.

**2. 그림을 보고 〈보기〉처럼 '-고 싶다'를 사용해서 대화를 완성하세요.**

ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການນຳໃຊ້ ໄວຍາກອນ '-고 싶다' ຄືດັ່ງຕົວຢ່າງ.





가: 뭐 하고 싶어요? ເຈົ້າຢາກເຮັດຫຍັງ?
나: <u>영화를 보고 싶어요</u>. ຂ້ອຍຢາກເບິ່ງໜັງ.

1) 

가: 뭐 하고 싶어요?
나: ______________________.

2) 

가: 뭐 하고 싶어요?
나: ______________________.

3) 

가: 뭐 하고 싶어요?
나: ______________________.

4) 

가: 뭐 하고 싶어요?
나: ______________________.

정답 1) 노래하고 싶어요 2) 산책하고 싶어요 3) 쇼핑하고 싶어요 4) 커피를 마시고 싶어요



### 유용한 표현 ສຳນວນທີ່ສຳຄັນ

**내일 뵙겠습니다.** ພົບກັນມື້ອື່ນ.

가: 지금 퇴근하세요? 조심해서 가요. ດຽວນີ້ ຈະເລີກວຽກແລ້ວບໍ? ກັບບ້ານດ້ວຍຄວາມລະມັດລະວັງເດີ.
나: 네, 반장님. **내일 뵙겠습니다.** ເຈົ້າ, ຫົວໜ້າ. **ພົບກັນມື້ອື່ນເດີ.**



## 대화 2 ບົດສົນທະນາ 2

Track 44



ຕວນ ແລະ ຊູຣູ ກຳລັງນັດໝາຍກັນເຮັດສິ່ງໃດໜຶ່ງ. ກ່ອນອື່ນຈົ່ງຟັງບົດສົນທະນາ 2 ຄັ້ງ ແລ້ວ ເວົ້າຕາມ.

투안　우리 내일 어디에서 만날까요?
ພວກເຮົາ ມື້ອື່ນຈະພົບກັນຢູ່ໃສ?

수루　시청 앞 어때요?
ຕໍ່ໜ້າສາລາກາງເດ ເປັນແນວໃດ?

투안　좋아요. 그러면 여섯 시쯤 만날까요?
ດີ, ຖ້າແນວນັ້ນ ພົບກັນປະມານ 6 ໂມງໄດ້ບໍ?

수루　여섯 시는 좀 빨라요.
6 ໂມງຂ້ອນຂ້າງໄວໂພດ.

일곱 시에 괜찮아요?
7 ໂມງ ພໍໄດ້ບໍ?

투안　네, 괜찮아요. ເຈົ້າ, ໄດ້.
그럼 내일 시청 앞에서 일곱 시에 봐요.
ສະນັ້ນ ມື້ອື່ນ ເວລາ 7 ໂມງ ພວກເຮົາພົບກັນຢູ່ຕໍ່ໜ້າຫໍສາລາກາງ.

**어때요? ເປັນແນວໃດ?**
ໃຊ້ເພື່ອຖາມຄຳຄິດເຫັນຂອງອີກຝ່າຍ ກ່ຽວກັບສະຖານະການໃດໜຶ່ງ ກ່ອນການຕັດສິນໃຈ.

- 이 구두 어때요?
  ເກີບນີ້ ເປັນແນວໃດ?
- 내일 여섯 시 어때요?
  ມື້ອື່ນ 6 ໂມງເປັນແນວໃດ?

**ຄຳນາມ 쯤 ປະມານ, ຂ້ອນຂ້າງ**
ເມື່ອໃຊ້ຮ່ວມກັບຄຳນາມ ແມ່ນມີຄວາມໝາຍວ່າ ປະມານ ຫຼື ຂ້ອນຂ້າງ.

- 주말쯤 만나서 같이 영화 볼까요?
  ປະມານ ທ້າຍອາທິດ ພົບກັນແລ້ວເບິ່ງໜັງ ບໍ?
- 12월 말쯤 고향으로 돌아가려고 해요.
  ປະມານເດືອນ 12 ຂ້ອຍວ່າຈະກັບໄປຢາມບ້ານກິດ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 투안 씨하고 수루 씨는 어디에서 만나요? ຕວນ ແລະ ຊູຣູ ນັດພົບກັນຢູ່ໃສ?
2. 두 사람은 몇 시에 만나요? ສອງຄົນນີ້ ນັດພົບກັນເວລາຈັກໂມງ?

정답 1. 시청 앞에서 만나요. 2. 일곱 시에 만나요.

**Tip 관공서** ສະຖານທີ່ ທາງລັດຖະການ


도청
ຫ້ອງການປົກຄອງແຂວງ


시청
ສາລາກາງ


구청
ຫ້ອງການປົກຄອງເມືອງ


경찰서
ສະຖານີຕຳຫຼວດ


소방서
ສະຖານີດັບເພີງ


출입국관리사무소
ຫ້ອງການເຂົ້າ-ອອກເມືອງ


보건소
ສຸກສາລາ / ສາທາລະນະສຸກ


주민센터
ສູນບໍລິການຊຸມຊົນ



## 어휘 2 ຄຳສັບ 2 상태 2 ຄຳສັບທີ່ສະແດງສະຖານະ 2



ຄຳຄຸນນາມທີ່ສະແດງສະຖານະ ມີຫຍັງແດ່ ພວກເຮົາລອງໄປຮຽນຮູ້ນຳກັນບໍ?




빠르다(이르다)
ໄວ ຫຼື ເຊົ້າ




늦다
ຊ້າ




가깝다
ໃກ້



멀다
ໄກ




같다
ຄືກັນ




다르다
ຕ່າງກັນ




간단하다
ທຳມະດາ, ລຽບງ່າຍ




복잡하다
ສັບສົນ



편하다
ສະດວກສະບາຍ



불편하다
ບໍ່ສະດວກ



가능하다
ເປັນໄປໄດ້



불가능하다
ບໍ່ເປັນໄປໄດ້

### 'ㄹ' ອະປົກກະຕິ

ເມື່ອຄຳທີ່ລົງທ້າຍດ້ວຍພະຍາງ 'ㄹ' ເມື່ອຕໍ່ດ້ວຍສະຫຼະສຽງ '으' ຈະຖືກຕັດອອກ ແລ້ວແທນດ້ວຍ 'ㄹ'.

예) · 빠르(다) + 아요 = 빨라요 · 이르(다) + 어요 = 일러요



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림을 보고 알맞은 단어를 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

①  


②  

③ 


④ 


㉠ 멀다 ㉡ 같다 ㉢ 다르다 ㉣ 가깝다



정답 ①㉣ ②㉠ ③㉡ ④㉢

## 문법 2 ໄວຍາກອນ 2 –(으)ㄹ까요

G13-2

'–(으)ㄹ까요' ມັນຖືກໃຊ້ຕື່ມທ້າຍຄຳກຳມະເພື່ອສະແດງເຖິງການຊັກຊວນ ຫຼື ແນະນຳຂໍ້ສະເໜີບາງຢ່າງໃຫ້ຄູ່ສົນທະນາ.

| 자음(ພະຍັນຊະນະ) → **-을까요** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-ㄹ까요** |
|---|---|
| 읽다 → 읽**을까요** | 사다 → **살까요**<br>만들다 → 만**들까요** |

- 가: 몇 시에 **만날까요**? ພວກພົບກັນເວລາຈັກໂມງ?
  나: 7시에 만나요. ພົບກັນເວລາ 7 ໂມງ.
- 가: 내일 같이 점심 **먹을까요**? ມື້ອື່ນ ໄປກິນເຂົ້າທ່ຽງນຳກັນບໍ?
  나: 좋아요. 같이 점심 먹어요. ຕົກລົງ. ເຮົາໄປກິນເຂົ້າທ່ຽງນຳກັນ.



### 비교해 보세요 ຈົ່ງປຽບທຽບເບິ່ງ

**✔ ລະຫວ່າງ '–(으)ㄹ까요' ກັບ '–(으)ㄹ래요(14과)'**

'–(으)ㄹ까요' ກັບ '–(으)ㄹ래요(14과)' ມັນຖືກໃຊ້ຖາມເຖິງຈຸດປະສົງຂອງຄູ່ສົນທະນາ. '–(으)ㄹ래요(14과)' ຖືກໃຊ້ຖາມກັບຜູ້ທີ່ອາຍຸສູງກວ່າເຮົາບໍ່ໄດ້ ແຕ່ '–(으)ㄹ까요' ສາມາດໃຊ້ຖາມກັບຜູ້ທີ່ມີອາຍຸສູງກວ່າເຮົາໄດ້ຖ້າອີກຝ່າຍໜຶ່ງມີຄວາມສະໜິດສະໜົມລົ້ງເຄີຍກັນ.

- 부장님, 몇 시에 갈래요? (X)
- 부장님, 몇 시에 **갈까요**? (O)



ເຂົ້າໃຈການໃຊ້ '–(으)ㄹ까요' ແລ້ວບໍ? ຕໍ່ໄປ ຈົ່ງລອງຕື່ມໃສ່ເນື້ອໃນບົດສົນທະນາໃຫ້ຖືກຕ້ອງ.

**2. 〈보기〉처럼 '–(으)ㄹ까요'를 사용해서 대화를 완성하세요.**
ຈົ່ງຕື່ມໃສ່ບົດສົນທະນາ ໂດຍການໃຊ້ '–(으)ㄹ까요' ຄືດັ່ງຕົວຢ່າງ.

**보기**
가: 오늘 같이 점심 먹을까요? ມື້ນີ້ ຈະໄປກິນເຂົ້າທ່ຽງນຳກັນບໍ?
나: 좋아요. 같이 점심 먹어요. ດີ, ຕົກລົງໄປກິນເຂົ້າທ່ຽງນຳກັນ.

1) 가: 저녁에 같이 ________________?
   나: 좋아요. 같이 영화 봐요.

2) 가: 지금 같이 커피 한잔 ________________?
   나: 미안해요. 지금 너무 바빠요.

3) 가: 오늘 몇 시에 ________________?
   나: 7시 어때요?

4) 가: 우리 내일 뭐 ________________?
   나: 같이 운동해요.

정답 1) 영화 볼까요 2) 마실까요 3) 만날까요 4) 할까요



ລອງມາຮຽນເພີ່ມເຕີມອີກໜ້ອຍໜຶ່ງບໍ? ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການໃຊ້ '–(으)ㄹ까요'.

1. 가: 저녁에 같이 시내에 ________________?
   나: 좋아요. 같이 시내에 가요.

2. 가: 주말에 같이 한국어를 ________________?
   나: 좋아요. 같이 공부해요.

정답 1. 갈까요 2. 공부할까요

## 활동 ກິດຈະກຳ

〈보기〉처럼 친구와 이야기해 보세요. ຈົ່ງລອງສ້າງບົດສົນທະນາກັບໝູ່ເພື່ອນ ຄືດັ່ງຕົວຢ່າງ.

**보기 ຕົວຢ່າງ**

| | |
|---|---|
| 가: 리한 씨, 우리 같이 극장에 갈까요? | ຣິຮັນ ພວກເຮົາໄປໂຮງໜັງນຳກັນບໍ? |
| 나: 좋아요. 같이 가요. | ດີ, ຕົກລົງໄປນຳກັນ. |
| 가: 극장에서 무슨 영화를 볼까요? | ຢູ່ໂຮງໜັງ ພວກເຮົາຈະເບິ່ງໜັງຫຍັງ? |
| 나: 코미디 영화 어때요? | ໜັງຕະລົກ ເປັນແນວໃດ? |
| 가: 좋아요. 그러면 몇 시에 만날까요? | ດີ, ຖ້າແນວນັ້ນ ພວກເຮົາຈະນັດພົບກັນຈັກໂມງ? |
| 나: 저녁 7시에 만나요. | ພົບກັນ ເວລາ 7 ໂມງແລງ. |
| 가: 어디에서 만날까요? | ພວກເຮົາຈະພົບກັນຢູ່ໃສ? |
| 나: 회사 앞에서 만나요. | ພົບກັນຢູ່ ຕໍ່ໜ້າບໍລິສັດ. |

| | 보기 ຕົວຢ່າງ 리한 씨 | ________ 씨 |
|---|---|---|
| 어디에 가요?<br>ໄປໃສບໍ? | 극장<br>ໂຮງໜັງ | |
| 뭐 해요?<br>ເຮັດຫຍັງ? | 코미디 영화를 봐요.<br>ເບິ່ງໜັງຕະລົກ. | |
| 언제 만나요?<br>ພົບກັນເມື່ອໃດ? | 저녁 7시<br>ເວລາ 7 ໂມງແລງ | |
| 어디에서 만나요?<br>ພົບກັນຢູ່ໃສ? | 회사 앞<br>ຕໍ່ໜ້າບໍລິສັດ | |



ຈົ່ງເບິ່ງຕົວຢ່າງຂ້າງເທິງນັ້ນ ແລະ ຈົ່ງຕອບຄຳຖາມຕໍ່ໄປນີ້.

✚ 알맞은 말에 ✓하세요. ຈົ່ງຕື່ມເຄື່ອງໝາຍ ✓ ໃສ່ຄຳເວົ້າທີ່ເໝາະສົມ.

(1) 리한 씨는 ☐ 공포 영화를 봅니다. ☐ 코미디 영화를 봅니다.

(2) 리한 씨는 ☐ 극장 앞에서 친구를 만납니다. ☐ 회사 앞에서 친구를 만납니다.

(3) 리한 씨는 일곱 시에 ☐ 영화를 봅니다. ☐ 친구를 만납니다.

정답 (1) 코미디 영화를 봅니다. (2) 회사 앞에서 친구를 만납니다. (3) 친구를 만납니다.



## 문화 ວັດທະນະທຳ

# 한국 사람들이 인사로 하는 약속

ຄົນເກົາຫຼີ ການນັດໝາຍເປັນພາກສ່ວນໜຶ່ງ ຂອງການທັກທາຍ




한국 사람들은 헤어질 때 "다음에 밥 한번 같이 먹어요.", "술 한잔 같이 해요."라는 인사를 하기도 합니다. 특히 헤어질 때 "연락할게."라는 말도 자주 하는데, 이런 말들은 약속이라기보다는 헤어지기 아쉬워서 하는 말인 경우가 많습니다. 구체적으로 날짜와 시간을 약속하지 않을 경우에는 가벼운 인사로 생각하는 것이 좋습니다. 만약에 한국사람들이 "언제든지 연락하세요."라고 말했더라도 너무 이른 시간이나 늦은 시간, 그리고 식사 시간이나 휴식 시간에는 연락을 피하는 것이 좋습니다. 또한 "언제든지 놀러 오세요."라고 말했더라도 전화로 미리 약속을 하고 만나러 가는 것이 좋습니다.

ຄົນເກົາຫຼີ ໃນເວລາທີ່ຈະລາຈາກກັນມັກຈະເວົ້າວ່າ "ມື້ໜ້າກິນເຂົ້ານຳກັນເນາະ" ຫຼື "ກິນເຫຼົ້ານຳກັນເນາະ" ຫຼື "ຈະຕິດຕໍ່ຫາເດີ" ເຊິ່ງບັນດາສຳນວນເຫຼົ່ານີ້ແມ່ນຈະໃຊ້ກັນຢ່າງແຜ່ຫຼາຍ ແຕ່ສິ່ງເຫຼົ່ານີ້ບໍ່ສາມາດທີ່ຈະເປັນການນັດພົບທີ່ແທ້ຈິ່ງໄດ້ ເປັນພຽງການເວົ້າທີ່ສະແດງຄວາມເສຍດາຍ ທີ່ຈະຕ້ອງຈາກກັນ, ໂດຍທົ່ວໄປການນັດທີ່ບໍ່ໄດ້ລະບຸມື້ ແລະ ເວລາ ໃຫ້ຄິດວ່າເປັນການທັກທາຍກັນກ່ອນຈາກເທົ່ານັ້ນ ຈົນກວ່າຈະມີການນັດພົບໂດຍລະບຸເປັນເວລາ ແລະ ສະຖານທີ່ຢ່າງຄັກແນ່. ນອກຈາກນັ້ນ ຄົນເກົາຫຼີມັກຈະເວົ້າວ່າ " ສາມາດຕິດຕໍ່ໄດ້ ທຸກເມື່ອທຸກເວລາ" ແຕ່ຂໍແນະນຳວ່າ ບໍ່ຄວນຕິດຕໍ່ພວກເຂົາ ເຊົ້າເກີນໄປໃນຕອນເຊົ້າ, ເລິກເກີນໄປ ໃນ ຕອນຄ່ຳ ຫຼື ໃນຊ່ວງເວລາກິນເຂົ້າ ຫຼື ເວລາພັກ. ອີກອັນໜຶ່ງ ເຖິງແມ່ນເວົ້າວ່າ "ສາມາດພົບໄດ້ທຸກເວລາ" ກໍແນະນຳໃຫ້ນັດ ໝາຍວ່າ ຈະໄປພົບກ່ອນການເຂົ້າພົບ.



## EPS-TOPIK 듣기 ພາກຟັງ EPS-TOPIK



ສຳລັບ ຂໍ້ 1 ແລະ 2 ເປັນພາກຟັງເພື່ອເລືອກເອົາຄຳສັບທີ່ຖືກຕ້ອງ, ຈົ່ງຕັ້ງໃຈຟັງ ແລະ ເລືອກເອົາຄຳຕອບທີ່ຖືກຕ້ອງ.

[1~2] 들은 것을 고르십시오. ຈົ່ງເລືອກເອົາຄຳຕອບທີ່ໄດ້ຍິນ.

Track 45

1. ① 내일 ② 영화 ③ 시간 ④ 극장

2. ① 도청 ② 시장 ③ 구청 ④ 시청



ຕໍ່ໄປ ເປັນການຟັງບົດສົນທະນາ ແລະ ເລືອກເອົາຄຳຕອບທີ່ຖືກຕ້ອງສຳລັບແຕ່ລະຄຳຖາມ. ກ່ອນການຟັງບົດສົນທະນາ ຈົ່ງທຳຄວາມເຂົ້າໃຈກັບຄຳຕອບສາກ່ອນ.

[3~5] 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ເໝາະສົມກັບແຕ່ລະຄຳຖາມ.

3. 두 사람은 내일 같이 무엇을 봅니까? ສອງຄົນນີ້ ມື້ອື່ນຈະພ້ອມກັນເບິ່ງຫຍັງ?
① 책 ② 사진
③ 영화 ④ 드라마

4. 두 사람은 내일 어디에서 만납니까? ສອງຄົນນີ້ ມື້ອື່ນ ຈະພົບກັນຢູ່ໃສ?
① 극장 앞 ② 회사 앞
③ 백화점 앞 ④ 도서관 앞

5. 두 사람은 내일 몇 시에 만납니까? ມື້ອື່ນ ທັງສອງຄົນນີ້ ຈະພົບກັນເວລາຈັກໂມງ?
① 6시 ② 7시
③ 8시 ④ 9시



## 듣기 대본 ເນື້ອໃນບົດຟັງ

1. 남: 영화 ໜັງ
2. 여: 시청 ສາລາກາງ
3. 남: 우리 내일 같이 영화 볼까요? ພວກເຮົາຈະໄປເບິ່ງໜັງນຳກັນບໍ?
   여: 좋아요. 같이 봐요. ດີ, ໄປເບິ່ງນຳກັນ.
4. 남: 우리 내일 어디에서 만날까요? ມື້ອື່ນ ພວກເຮົາຈະພົບກັນຢູ່ໃສ?
   여: 백화점 앞에서 볼까요? ພົບກັນຢູ່ໜ້າ ຫ້າງຊັບພະສິນຄ້າ.
   남: 좋아요. 거기에서 만나요. ດີ. ພົບກັນຢູ່ນັ້ນເດີ.
5. 남: 내일 7시에 만날까요? ມື້ອື່ນ ຈະພົບການເວລາ 7 ໂມງໄດ້ບໍ?
   여: 7시는 좀 힘들어요. 8시는 어때요? ເວລາ 7 ໂມງ ຂ້ອຍຂ້າງຍາກ. ເວລາ 8 ໂມງເດ ເປັນແນວໃດ?
   남: 좋아요. 그럼 8시에 만나요. ດີ. ສະນັ້ນ ພົບກັນ ເວລາ 8 ໂມງ.

정답 1. ② 2. ④ 3. ③ 4. ③ 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ L-13

1. 잘 듣고 내용과 관계있는 그림을 고르십시오. ຈົ່ງຕັ້ງໃຈຟັງ ແລ້ວເລືອກເອົາຮູບພາບ ທີ່ກ່ຽວຂ້ອງກັບເນື້ອໃນນັ້ນ.

① 

② 

③ 

④ 

2. 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

① 오늘 만나요. ② 은행 앞 어때요?
③ 세 명이 만나요. ④ 두 시에 만날까요?

## 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 의자가 불편해요. ຕັ່ງນັ່ງ ມັນບໍ່ສະດວກສະບາຍປານໃດ.
2. 남: 어디에서 만날까요? ຈະພົບກັນຢູ່ໃສບໍ?

정답 1. ③ 2. ②



## EPS-TOPIK 읽기 ພາກອ່ານ EPS-TOPIK



ສຳລັບ ຂໍ້ 1 ແລະ 2 ແມ່ນເປັນການອ່ານບົດສົນທະນາ ແລະ ເລືອກເອົາຄຳຕອບໃຫ້ຖືກຕ້ອງຕາມແຕ່ລະຄຳຖາມ. ຈົ່ງຄິດທົບທວນໃນສິ່ງທີ່ຮຽນມາ ເພື່ອຕອບຄຳຖາມເຫຼົ່ານີ້.

[1~2] 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 두 사람은 지금 무엇을 하고 있습니까? ດຽວນີ້ ທັງສອງຄົນກຳລັງເຮັດຫຍັງ?

   가: 우리 내일 같이 저녁 먹을까요? ມື້ອື່ນ ພວກເຮົາໄປກິນເຂົ້າແລງນຳກັນບໍ?
   나: 좋아요. 같이 저녁 먹어요. ດີ, ໄປກິນເຂົ້າແລງນຳກັນ.

   ① 식사 ② 운동 ③ 약속 ④ 쇼핑

2. 두 사람은 오늘 같이 무엇을 합니까? ສອງຄົນ ມື້ນີ້ ພ້ອມກັນເຮັດຫຍັງ?

   가: 우리 오늘 뭐 할까요? 같이 영화 볼까요? ມື້ນີ້ ພວກເຮົາຈະເຮັດຫຍັງ? ໄປເບິ່ງໜັງນຳກັນບໍ?
   나: 산책 어때요? 공원에서 같이 산책하고 싶어요.
   ໄປຍ່າງຫຼິ້ນເປັນແນວໃດ? ຢາກໄປຍ່າງຫຼິ້ນນຳກັນ ຢູ່ສວນສາທາລະນະ.
   가: 그래요? 좋아요. 그럼 산책해요. ແມ່ນບໍ? ດີຄືກັນ. ສະນັ້ນ ໄປຍ່າງຫຼິ້ນນຳກັນເນາະ.

   ① 책을 봅니다. ② 산책을 합니다. ③ 영화를 봅니다. ④ 게임을 합니다.



ສຳລັບ ຂໍ້ 3 ຫາ 5 ແມ່ນເປັນການເລືອກເອົາສຳນວນ ຕື່ມໃສ່ຫວ່າງ. ຈົ່ງຄິດທົບທວນໃນສິ່ງທີ່ຮຽນມາ ແລ້ວຕອບຄຳຖາມເຫຼົ່ານີ້ລອງເບິ່ງ.

[3~5] 빈칸에 들어갈 가장 알맞은 것을 고르십시오.
ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3. 수루 씨, 오늘 저녁에 ____________ 있어요? ຊູຣູ, ມື້ນີ້ຕອນແລງ ມີເວລາບໍ?

   ① 시간 ② 생일 ③ 날짜 ④ 주말

4. 우리 ____________ 영화를 볼까요? 코미디 영화 어때요?
   ພວກເຮົາຈະເບິ່ງໜັງຫຍັງ? ໜັງຕະລົກເດເປັນແນວໃດ?

   ① 언제 ② 무슨 ③ 누구 ④ 무엇

5. 저는 내일 친구하고 같이 영화를 ____________. ມື້ອື່ນ ຂ້ອຍຢາກໄປເບິ່ງໜັງນຳໝູ່ເພື່ອນ.

   ① 보세요 ② 봤어요 ③ 봐 주세요 ④ 보고 싶어요

정답 1. ③ 2. ② 3. ① 4. ② 5. ④



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~4] 빈칸에 들어갈 알맞은 말을 고르십시오. ຈົ່ງເລືອກເອົາຄຳສັບ ທີ່ເໝາະສົມ ຕື່ມໃສ່ບ່ອນຫວ່າງ.

1. 저는 이번 주말에 ______이 많습니다. 고향 친구들과 영화도 보고 회사 동료들과 저녁도 먹을 겁니다.

   ໃນທ້າຍອາທິດ ຂ້ອຍມີນັດຫຼາຍ. ນັດເບິ່ງໜັງກັບເພື່ອນເກົ່າ ທີ່ມາຈາກບ້ານເກີດ ແລະ ຕອນແລງ ມີນັດກິນເຂົ້າແລງກັບເພື່ອນຮ່ວມງານທີ່ບໍລິສັດ.

   ① 배달 ② 예약 ③ 약속 ④ 주문

2. 저는 주말에 ______이/가 있으면 보통 청소와 빨래를 하고 동료들과 영화를 봅니다.

   ໃນທ້າຍອາທິດ ຖ້າຂ້ອຍມີເວລາ ປົກກະຕິແລ້ວ ຈະອະນາໄມ ແລະ ຊັກເຄື່ອງຂອງ ແລະ ໄປເບິ່ງໜັງກັບເພື່ອນຮ່ວມງານ.

   ① 교육 ② 시간 ③ 야근 ④ 회의

3. 집이 너무__________ 출퇴근 시간이 많이 걸립니다. 그래서 다음 달에 회사 근처로 이사를 하려고 합니다.

   ຍ້ອນເຮືອນຢູ່ໄກ ທ່ຽວເຮັດວຽກໃຊ້ເວລາຫຼາຍ. ສະນັ້ນ ໃນເດືອນໜ້າ ຈະຍ້າຍມາຢູ່ແຖວໃກ້ໆບໍລິສັດ.

   ① 멀어서 ② 가까워서 ③ 좋아서 ④ 괜찮아서

4. 저는 월요일부터 금요일까지 일을 하고 주말에는 쉽니다. 오늘은 쉬는 날이지만 일이 __________ 공장에 나왔습니다.

   ສຳລັບຂ້ອຍ ນັບແຕ່ວັນຈັນຮອດວັນສຸກ ແມ່ນເຮັດວຽກ ແລະ ທ້າຍອາທິດແມ່ນພັກຜ່ອນ. ມື້ນີ້ ແມ່ນມື້ພັກຜ່ອນ ແຕ່ຍ້ອນມີວຽກຫຼາຍ ຈຶ່ງໄດ້ອອກມາເຮັດວຽກຢູ່ໂຮງງານ.

   ① 편해서 ② 적어서 ③ 많아서 ④ 한가해서

정답 1. ③ 2. ② 3. ① 4. ③

### 발음 ການອອກສຽງ




**ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.**

ໃນພາສາເກົາຫຼີ ຄຳທີ່ບໍ່ມີສຽງປະກອບມີ 'ㄴ', 'ㅁ', 'ㅇ' ແມ່ນຕ້ອງໄດ້ປະກອບພະຍາງອື່ນ ຈຶ່ງອອກສຽງໄດ້. ສຳລັບ 'ㅇ' ແມ່ນໃຊ້ສຳລັບຕົວສະກົດພຽງຢ່າງດຽວ.

(1) 나, 니, 누, 네, 노
(2) 누구, 누나, 나비, 나무, 노래
(3) 모두, 머리, 모자, 매미, 미나리
(4) 강, 공, 상, 방, 가방



# 저는 비빔밥을 먹을래요
ຂ້ອຍຈະກິນບີບິມປັບ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ຈຸດປະສົງໃນການຮຽນ | ການສັ່ງອາຫານ |
| □ໄວຍາກອນ | -(으)ㄹ래요, 안 |
| □ຄຳສັບ ແລະ ສຳນວນຄຳເວົ້າ | ຮ້ານຫານ, ລົດຊາດຂອງອາຫານ |
| □ຂໍ້ມູນກ່ຽວກັບວັດທະນາທຳ | ເມນູອາຫານ |



## 대화 1 ບົດສົນທະນາ 1

Track 46



ຕວນ ແລະ ຣີຮັນ ກຳລັງສັ່ງອາຫານໃນຮ້ານອາຫານ. ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

종업원 어서 오세요. 몇 분이세요?
ຍິນດີຕ້ອນຮັບ. ມານຳກັນຈັກຄົນ?

투 안 두 명이요. 자리 있어요?
ມີ ສອງຄົນ. ມີບ່ອນນັ່ງຢູ່ບໍ?

종업원 네, 있어요. 이쪽으로 앉으세요.
ເຈົ້າ, ມີ. ເຊີນນັ່ງທາງນີ້ເລີຍ.
뭐 드릴까요?
ຈະສັ່ງຫຍັງບໍ?

리 한 저는 비빔밥 먹을래요.
ຂ້ອຍຈະກິນບີບິມປັບ.
투안 씨는 뭐 먹을래요?
ຕວນເດຈະກິນຫຍັງບໍ?

투 안 저는 김치찌개 먹을래요.
ຂ້ອຍຈະກິນກິມຈີຈີ່ແກ່.

리 한 그럼 여기 비빔밥하고 김치찌개 주세요.
ສະນັ້ນ, ຂໍບີບິມປັບ ແລະ ຄິມຈີຈີ່ເກ.

> **분** ຄົນ
> ໃຊ້ໃນເວລາເວົ້າກັບຜູ້ອາວຸໂສ.
> · 저분이 우리 사장님이세요.
> ເຜີນຜູ້ນັ້ນ ແມ່ນຫົວໜ້າຂອງພວກເຮົາ.



> **뭐 드릴까요?** ຈະສັ່ງຫຍັງບໍ?
> ໃຊ້ໃນເວລາພະນັກງານເສີບຮັບອໍເດີຈາກແຂກໃນຮ້ານອາຫານ ຫຼື ຮ້ານກາເຟ.
> · 손님, 뭐 드릴까요?
> ທ່ານ, ຈະສັ່ງຫຍັງ?



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 리한 씨는 무엇을 주문해요? ຣີຮັນ ສັ່ງຫຍັງບໍ?
2. 투안 씨는 무엇을 주문해요? ຕວນ ສັ່ງຫຍັງບໍ?

정답 1. 비빔밥을 주문해요. 2. 김치찌개를 주문해요.



## 어휘 1 ຄຳສັບ 1 식당 ຮ້ານອາຫານ

ຄຳສັບທີ່ກ່ຽວຂ້ອງກັບຮ້ານອາຫານມີຫຍັງແດ່? ພວກເຮົາມາຮຽນຮູ້ນຳກັນເລີຍບໍ?

| | | | |
|---|---|---|---|
| 자리가 있다<br>ມີບ່ອນນັ່ງ (ໂຕະຫວ່າງ) | 자리가 없다<br>ບໍ່ມີບ່ອນນັ່ງ (ເຕັມ, ໂຕະບໍ່ຫວ່າງ) | 메뉴판<br>ລາຍການອາຫານ | 메뉴<br>ລາຍການເມນູ |
| 밥<br>ເຂົ້າ | 반찬<br>ອາຫານຈານເສີມ | 숟가락<br>ບ່ວງ | 젓가락<br>ໄມ້ທູ່ |
| 앉다<br>ນັ່ງ | 고르다<br>ເລືອກ | 시키다(주문하다)<br>ສັ່ງອາຫານ | 배달하다<br>ສົ່ງ (ອາຫານ, ເຄື່ອງ...) |



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງ ພາກສ່ວນຄຳສັບຂ້າງເທິງນັ້ນ.

1. 그림을 보고 알맞은 단어를 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.



① ② ③ ④

㉠ 밥 ㉡ 반찬 ㉢ 숟가락 ㉣ 젓가락

정답 ①㉡ ②㉠ ③㉣ ④㉢



## 문법 1 ໄວຍາກອນ 1 -(으)ㄹ래요

G14-1

'-(으)ㄹ래요' ມັນຖືກໃຊ້ຕື່ມທ້າຍຄຳກຳມະ ຫຼື ຄຳຄຸນນາມເພື່ອຊີ້ບອກຄວາມຕັ້ງໃຈ,ຄວາມມຸ່ງຫວັງຢາກ ຈະເຮັດສິ່ງໃດ ໜຶ່ງຂອງຜູ້ເວົ້າທີ່ຢາກຈະເຮັດສິ່ງໃດໜຶ່ງ ແລະ ໃຊ້ຖາມເຖິງຄວາມຕັ້ງໃຈ, ຄວາມມຸ່ງຫວັງຂອງຄູ່ສົນທະນາຂອງເຮົາກໍໄດ້ຄືກັນ. ໂດຍທົ່ວໄປແລ້ວ ເຮົາມັກໃຊ້ ໃນເວລາລົມກັບໝູ່ເພື່ອນ ທີ່ສະໜິດແບບບໍ່ເປັນທາງການ.

| 자음(ພະຍັນຊະນະ) → **-을래요** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ'→ **-ㄹ래요** |
|---|---|
| 읽다 → 읽**을래요** | 가다 → **갈래요**<br>놀다 → **놀래요** |

- 가: 주말에 우리 같이 **놀래요**? ທ້າຍອາທິດ ພວກເຮົາໄປຫຼິ້ນນຳກັນບໍ?
  나: 좋아요. 같이 놀아요. ດີຄືກັນ. ໄປຫຼິ້ນນຳກັນ.
- 가: 내일 같이 운동**할래요**? ມື້ອື່ນ ໄປອອກກຳລັງກາຍນຳກັນບໍ?
  나: 저는 집에서 **쉴래요**. ຂ້ອຍຈະພັກຜ່ອນຢູ່ເຮືອນ.



**비교해 보세요** ຈົ່ງປຽບທຽບລອງເບິ່ງ

### ✔ ລະຫວ່າງ '-(으)ㄹ래요' ກັບ '-고 싶다'

'-(으)ㄹ래요' ບໍ່ສາມາດນຳໃຊ້ເຂົ້າໃນປະໂຫຍກທີ່ຄຳຕົວຕັ້ງເປັນບຸລຄທີ 3 ແຕ່ມັນສາມາດນຳໃຊ້ໃນກໍລະນີທີ່ຜູ້ເວົ້າຢາກຊີ້ບອກຈຸດປະສົງຂອງຕົນ. ໃນກໍລະນີ ທີ່ຜູ້ເວົ້າຢາກຊີ້ບອກເຖິງຄວາມມຸ່ງຫວັງຂອງຕົນໃຫ້ໃຊ້ '-고 싶다'. ໂດຍທົ່ວໄປແລ້ວ ເຮົາໃຊ້ '-(으)ㄹ래요' ກັບເລື່ອງທີ່ມີຄວາມເປັນໄປໄດ້ທີ່ຈະສົມຫວັງໄ ແຕ່ '-고 싶다' ເຮົາສາມາດໃຊ້ກັບເລື່ອງທີ່ບໍ່ມີຄວາມເປັນໄປໄດ້.

- 하늘을 날래요. (X)
- 하늘을 **날고 싶어요**. (O)



ເຂົ້າໃຈກ່ຽວກັບການນຳໃຊ້ '-(으)ㄹ래요' ແລ້ວບໍ? ຈົ່ງເບິ່ງຮູບພາບ ແລ້ວ ສ້າງບົດສົນທະນາ ຄືດັ່ງຕົວຢ່າງ.

**2. 그림을 보고 〈보기〉처럼 '-(으)ㄹ래요'를 사용해서 대화를 완성하세요.**

ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການນຳໃຊ້ ໄວຍາກອນ ຄືດັ່ງຕົວຢ່າງ.

보기



가: 뭐 먹을래요? ຈະກິນຫຍັງບໍ?
나: 저는 비빔밥 먹을래요. ຂ້ອຍຈະກິນບີບິມບັບ.

1) 
가: ______________________?
나: ______________________.

2)
가: ______________________?
나: ______________________.

3) 
가: ______________________?
나: ______________________.

4) 
가: ______________________?
나: ______________________.

정답 1) 가: 뭐 먹을래요 나: 저는 라면 먹을래요 2) 가: 뭐 할래요 나: 저는 영화 볼래요
3) 가: 뭐 마실래요 나: 저는 커피 마실래요 4) 가: 뭐 할래요 나: 저는 집에서 쉴래요



## 대화 2 ບົດສົນທະນາ 2

Track 47



ອາຫານທີ່ ຣີຮັນ ແລະ ຕວນ ມັກ ແລະ ທັງສອງກຳລັງສົນທະນາກ່ຽວກັບລົດຊາດ ຂອງອາຫານນັ້ນ. ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

리한 　투안 씨는 김치찌개를 좋아해요?
ຕວນ ມັກຄີມຈີຈີ່ເກບໍ?

투안 　네, 정말 좋아해요.
ເຈົ້າ, ມັກຫຼາຍທີ່ສຸດເລີຍ.

리한 　김치찌개가 안 매워요?
ຄີມຈີຈີ່ເກບໍ່ເຜັດບໍ?

투안 　조금 매워요. 하지만 맛있어요.
ເຜັດໜ້ອຍໜຶ່ງ, ແຕ່ກໍ່ແຊບດີ.
리한 씨는 김치찌개 좋아해요?
ຣີຮັນ ມັກຄີມຈີຈີ່ເກບໍ?

리한 　아니요, 전 안 좋아해요.
ບໍ່, ຂ້ອຍບໍ່ມັກ.

**조금** ໜ້ອຍໜຶ່ງ

'좀' 'ໜ້ອຍໜຶ່ງ' ສາມາດໃຊ້ແທນໄດ້ຄືກັນ.

- 오늘은 조금 바빠요.
  ມື້ນີ້ຄາວຽກໜ້ອຍໜຶ່ງ.
- 제 동생은 키가 조금 작아요.
  ນ້ອງຂອງຂ້ອຍ ເປັນຄົນຕ່ຳໜ້ອຍໜຶ່ງ.

**하지만** ແຕ່ວ່າ

ໃຊ້ໃນເວລາເວົ້າການເຊື່ອມລະຫວ່າງເນື້ອໃນ ແລະ ປະໂຫຍກທາງດ້ານໜ້າ, ດ້ານຫຼັງເຂົ້າຫາກັນ.

- 이 건물에 약국은 있어요. 하지만 편의점은 없어요.
  ໃນຕຶກນີ້ມີຮ້ານຂາຍຢາ ແຕ່ວ່າບໍ່ມີຮ້ານສະດວກຊື້.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 누가 김치찌개를 좋아해요? ແມ່ນໃຜມັກຄີມຈີຈີ່ເກ?
2. 김치찌개 맛이 어때요? ລົດຊາດຂອງຄີມຈີຈີ່ເກເປັນແນວໃດ?

정답 1. 투안 씨가 김치찌개를 좋아해요. 2. 조금 매워요. 하지만 맛있어요.

**Tip 음식 단위 명사** ຄຳນາມທີ່ເປັນຫົວໜ່ວຍຂອງອາຫານ



| | | | | |
|---|---|---|---|---|
| 밥: ເຂົ້າ | 한 공기<br>1 ຖ້ວຍ | 두 공기<br>2 ຖ້ວຍ | 세 공기<br>3 ຖ້ວຍ | 네 공기<br>4 ຖ້ວຍ |
| 국: ແກງ | 한 그릇<br>1 ຖ້ວຍ | 두 그릇<br>2 ຖ້ວຍ | 세 그릇<br>3 ຖ້ວຍ | 네 그릇<br>4 ຖ້ວຍ |
| 반찬: ອາຫານຈານເສີມ | 한 접시<br>1 ຈານ | 두 접시<br>2 ຈານ | 세 접시<br>3 ຈານ | 네 접시<br>4 ຈານ |
| 불고기: ຄົ້ວຊີ້ນງົວ | 1인분<br>ສຳລັບ 1 ຄົນ | 2인분<br>ສຳລັບ 2 ຄົນ | 3인분<br>ສຳລັບ 3 ຄົນ | 4인분<br>ສຳລັບ 4 ຄົນ |



## 어휘 2 ຄຳສັບ 2 — 음식의 맛 ລົດຊາດຂອງອາຫານ



ມາຮຽນຮູ້ຄຳສັບທີ່ກ່ຽວກັບລົດຊາດ ຂອງອາຫານນຳກັນບໍ?



| 맛있다 | 맛없다 | 맵다 | 달다 |
|---|---|---|---|
| ແຊບ | ບໍ່ແຊບ | ເຜັດ | ຫວານ |

| 짜다 | 싱겁다 | 쓰다 | 시다 |
|---|---|---|---|
| ເຄັມ | ຈາງ | ຂົມ | ສົ້ມ |

- 비빔밥이 정말 **맛있어요**. ບິບິມບັບແຊບຫຼາຍ.
- 떡볶이가 조금 **매워요**. 하지만 **맛있어요**. ຕ໋ອກບົກກິ ແຊບຫຼາຍ ແຕ່ວ່າເຜັດ.
- 음식이 **짜요**. 음식이 **짜면** 건강에 나빠요. ອາຫານເຄັມ, ຖ້າວ່າອາຫານເຄັມເຮັດໃຫ້ສຸຂະພາບບໍ່ດີ.
- 이 오렌지는 너무 **시어요**. ໝາກກ້ຽງນີ້ສົ້ມຫຼາຍ.

### ຂໍ້ກຳນົດ ໃນການໃຊ້ 'ㅂ'

ສຳລັບພະຍາງທີ່ລົງທ້າຍດ້ວຍ 'ㅂ' ແລະ ຕ້ອງເຊື່ອມຕໍ່ກັບຄຳທີ່ຂຶ້ນຕົ້ນດ້ວຍສະຫຼະ ມັນຈະປ່ຽນເປັນ '우'.

예) · 맵(다) + 어요 = 매워요 · 싱겁(다) + 어요 = 싱거워요



ຂໍ້ກຳນົດຂອງການໃຊ້ 'ㅂ' ໃນຄຳຄຸນນາມປະກອບມີ 'ເຜັດ (매워요), ຈາງ (싱거워요), ຮ້ອນ (더워요), ໜາວ (추워요), ໜັກ (무거워요), ເບົາ (가벼워요), ງ່າຍ (쉬워요), ຍາກ (어려워요), ໃກ້ (가까워요)' ແລະ ອື່ນໆ.



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림을 보고 알맞은 단어를 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.



①　②　③　④

㉠ 짜다　㉡ 맵다　㉢ 달다　㉣ 싱겁다

정답 ①㉠ ②㉢ ③㉡ ④㉣



## 문법 2 ໄວຍາກອນ 2 안

G14-2

'안' ມັນຖືກໃຊ້ກັບປະໂຫຍກປະຕິເສດ ໂດຍໃຊ້ຕື່ມເຂົ້າທາງໜ້າຂອງຄໍາກໍາມະ ຫຼື ຄໍາຄຸນນາມ. ໃນກໍລະນີ ກຸ່ມຄໍາ ທີ່ເປັນຮູບ 'ຄໍານາມ+하다' ເຊັ່ນ '운동하다' ເປັນຕົ້ນ ແມ່ນໃຫ້ຕື່ມ '안' ໃສ່ລະຫວ່າງກາງຂອງ 'ຄໍານາມ' ກັບ '하다' ແລ້ວປ່ຽນເປັນ 'ຄໍານາມ 안 하다'. ຕົວຢ່າງ: '운동하다' ປ່ຽນເປັນ '운동을 안 하다'. ໃນກໍລະນີ ຂອງ '있다' ແມ່ນຈະບໍ່ຕື່ມ '안' ໃສ່ທາງໜ້າຂອງ '있다' ໄດ້. ແຕ່ໃຫ້ໃຊ້ '없다' ແທນເລີຍ. ຈະບໍ່ໃຊ້ '안 있다'.

- 가: 아침 먹었어요? *ເຈົ້າໄດ້ກິນເຂົ້າເຊົ້າແລ້ວບໍ?* 나: 아니요, **안** 먹었어요. *ບໍ່, ບໍ່ໄດ້ກິນ.*
- 가: 어제 운동했어요? *ມື້ວານ ເຈົ້າໄດ້ອອກກໍາລັງກາຍບໍ?* 나: 아니요, 운동 **안** 했어요. *ບໍ່, ບໍ່ໄດ້ອອກກໍາລັງກາຍ.*
- 가: 이 영화가 재미있어요? *ໜັງເລື່ອງນີ້ມ່ວນບໍ?* 나: 아니요, 재미**없어요**. *ບໍ່, ບໍ່ມ່ວນ.*



### 비교해 보세요 ຈົ່ງປຽບທຽບເບິ່ງ

**✔ ລະຫວ່າງ '안' ກັບ '못'**

'안' ກັບ '못' ມັນຖືກໃຊ້ກັບປະໂຫຍກປະຕິເສດ ແລະໃຊ້ຕື່ມໃສ່ທາງໜ້າຄໍາສໍາແດງ. '안' ແມ່ນຮູບແບບການປະຕິເສດຕາມຄວາມຕ້ອງການຂອງປະທານໃນປະໂຫຍກ, ເປັນການປະຕິເສດແບບງ່າຍດາຍ. ສ່ວນ '못' ໃຊ້ໃນກໍລະນີທີ່ປະທານໃນປະໂຫຍກຂາດຄວາມສາມາດ ຫຼື ດ້ວຍເຫດຜົນອື່ນຈຶ່ງບໍ່ສາມາດເຮັດສິ່ງນັ້ນໄດ້ ແລະ ເຮົາບໍ່ສາມາດໃຊ້ '못' ກັບຄໍາຄຸນນາມໄດ້.

- 가고 싶지 않아서 **안** 가요. (O)
- 가고 싶지 않아서 못 가요. (X)
- 오늘은 **안** 추워요. (O)
- 오늘은 못 추워요. (X)



ເຂົ້າໃຈການໃຊ້ '안' ແລ້ວບໍ? ສະນັ້ນ ຈົ່ງລອງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.

**2. 그림을 보고 〈보기〉처럼 대화를 완성하세요.**

ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.



보기

가: 불고기가 매워요? *ຄໍ້ຊີ້ນງົວເຜັດບໍ?*
나: 아니요, <u>안 매워요</u>. *ບໍ່, ມັນບໍ່ເຜັດ.*

1) 가: 일요일에 회사에 가요?
   나: 아니요, ______________________.

2) 가: 아이스크림을 좋아해요?
   나: 아니요, ______________________.

3) 가: 아침을 먹었어요?
   나: 아니요, ______________________.

4) 가: 어제 운동했어요?
   나: 아니요, ______________________.

정답 1) 회사에 안 가요 2) 안 좋아해요 3) 안 먹었어요 4) 운동 안 했어요




〈보기〉처럼 친구와 함께 음식을 주문해 보세요.
ຈົ່ງສ້າງບົດສົນທະນາການສັ່ງອາຫານ ກັບໝູ່ເພື່ອນຄືກັບຕົວຢ່າງລອງເບິ່ງ.




**보기 ຕົວຢ່າງ**

종업원: 어서 오세요. 몇 분이세요? ເຊີນເຂົ້າມາ. ມີຈັກຄົນບໍ່?

손님1: 두 명이요. 자리 있어요? ສອງ ຄົນ, ມີບ່ອນນັ່ງບໍ່?

종업원: 네, 있어요. 이쪽으로 앉으세요. 뭐 드릴까요?
ເຈົ້າ, ມີ. ເຊີນນັ່ງທາງດ້ານນີ້ເລີຍ. ຈະສັ່ງອາຫານຫຍັງບໍ່?

손님2: 저는 김치찌개 먹을래요. ຂ້ອຍຈະກິນ ຄິມຈິຈີ່ເກ.

손님1: 저는 갈비탕 먹을래요. ຂ້ອຍຈະກິນຄັນບິທັງ.

손님2: 여기 김치찌개하고 갈비탕 주세요. ຂ້ອຍ, ເອົາຄິມຈິຈີ່ເກ ແລະ ຄັນບິທັງໃຫ້ແດ່.



ຈົ່ງເບິ່ງຕົວຢ່າງຂ້າງເທິງ ແລ້ວຕອບຄຳຖາມຕໍ່ໄປນີ້ລອງເບິ່ງ.

✚ 알맞은 말에 ✓하세요. ຈົ່ງຕື່ມເຄື່ອງໝາຍ ✓ ໃສ່ຄຳເວົ້າທີ່ເໝາະສົມ.

(1) 식당에 자리가 — ☐ 있어요. / ☐ 없어요.
ທີ່ນັ່ງໃນຮ້ານອາຫານ — ມີ. / ບໍ່ມີ.

(2) 갈비탕하고 김치찌개를 — ☐ 시켰어요. / ☐ 안 시켰어요.
ຄັນບີ່ທັງ ແລະ ຄິມຈິຈີ່ເກ — ໄດ້ສັ່ງ. / ບໍ່ໄດ້ສັ່ງ.

(3) 식당에 손님이 — ☐ 한 명 왔어요. / ☐ 두 명 왔어요.
ແຂກໃນຮ້ານອາຫານ — ໄດ້ມາ 1 ຄົນ. / ໄດ້ມາ 2 ຄົນ.

(4) 비빔밥이 갈비탕보다 — ☐ 싸요. / ☐ 비싸요.
ບິບິມປັບ, ......ກວ່າ ຄັນບິທັງ — ຖືກ. / ແພງ.

정답 (1) 있어요. (2) 시켰어요. (3) 두 명 왔어요. (4) 싸요.



## 정보 ຂໍ້ມູນທົ່ວໄປ

# 음식 메뉴 ລາຍການອາຫານ

**한식**
ອາຫານເກົາຫຼີ


김치찌개
ຄິມຈີຈີ່ເກ


된장찌개
ເທັນຈັງຈີ່ເກ


순두부찌개
ຊຸນທຸບູຈີ່ເກ


삼계탕
ຊຳແກຕັງ


갈비탕ຄັນບີຕັງ


감자탕
ຄຳຈາຕັງ


불고기ຄົ້ວຊີ້ນງົວ
(ບຸນໂກກີ)


비빔밥
ບີບິມປັບ

**중식**
ອາຫານຈີນ


자장면 ຈາຈັງມຽນ
(ໝີ່ດຳ)


짬뽕
ຈຳປົງ


탕수육ທັງຊຸຍຸກ


군만두
ກຸນມັນທຸ

**일식**
ອາຫານຍີ່ປຸ່ນ


초밥 ໂຈປັບ (ຊູຊິ)


돈가스
ທຸນກາສີ


우동
ໂອເດັ້ງ


모밀
ໝີ່ດຳຍີ່ປຸ່ນ

**분식**
ບຸນຊິກ


김밥
ຄິມປັບ (ເຂົ້າຫໍ່ສາລາຍ)


떡볶이
ຕ່ອກບົ໊ກກີ


튀김
ທະວີກິມ


순대
ຊຸນແດ

**간식/야식**
ອາຫານຫວ່າງ/
ອາຫານເດິກ


치킨
ທອດຊີ້ນໄກ່


족발
ຕົ້ມຂາໝູ


보쌈
ຕົ້ມຊີ້ນໝູສາມຊັ້ນ


피자
ພີຊາ



# EPS-TOPIK 듣기 ພາກຟັງ EPS-TOPIK



ສຳລັບຂໍ້ 1 ແລະ 2 ຈົ່ງຟັງໃຫ້ດີ ແລ້ວເລືອກເອົາຄຳສັບທີ່ກ່ຽວຂ້ອງກັບຮູບພາບ.

[1~2] 들은 것을 고르십시오. ຈົ່ງເລືອກເອົາຄຳຕອບທີ່ໄດ້ຍິນ.

Track 48

1. ① ② ③ ④

2. ① ② ③ ④



ຈົ່ງບົດຟັງບົດສົນທະນາຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ, ກ່ອນຟັງບົດສົນທະນາ ຈົ່ງກວດຄືນເບິ່ງຄຳຖາມກ່ອນ.

[3~5] 이야기를 듣고 질문에 알맞은 대답을 고르십시오.

ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ເໝາະສົມກັບແຕ່ລະຄຳຖາມ.

3. 여기는 어디입니까? ບ່ອນນີ້ ແມ່ນຢູ່ໃສ?

① 극장 ② 식당
③ 공원 ④ 서점

4. 여자는 무엇을 먹고 싶어합니까? ຜູ້ຍິງຄົນນັ້ນ ຢາກກິນຫຍັງ?

① 된장찌개 ② 김치찌개
③ 부대찌개 ④ 순두부찌개

5. 남자는 무엇을 좋아합니까? ຜູ້ຍິງຄົນນັ້ນ ມັກຫຍັງ?

① 불고기 ② 비빔밥
③ 삼계탕 ④ 갈비탕



## 듣기 대본 ເນື້ອໃນບົດຟັງ

1. ① 남: 물수건 ຜ້າປຽກເຊັດມື　　② 남: 공깃밥 ຖ້ວຍເຂົ້າ
   ③ 남: 메뉴판 ລາຍການອາຫານ　　④ 남: 불고기 ຄົ້ວຊີ້ນງົວ
2. ① 여: 짜요. ເຄັມ.　　② 여: 써요. ຂົມ.
   ③ 여: 달아요. ຫວານ.　　④ 여: 매워요. ເຜັດ.
3. 남: 뭐 드릴까요? ຈະສັ່ງຫຍັງບໍ?
   여: 비빔밥하고 김치찌개 주세요. ເອົາບິບິມບັບ ແລະ ຄິມຈິຈີ່ເກໃຫ້ແດ່.
4. 남: 전 김치찌개 먹고 싶어요. 수루 씨는요? ຂ້ອຍຢາກກິນຄິມຈີຈີ່ເກ. ຊູຣູ ກິນຫຍັງ?
   여: 저는 된장찌개 먹을래요. ຂ້ອຍຈະກິນເທັນຈັງຈີ່ເກ.
5. 남: 수미 씨는 불고기 좋아해요? ຊູມີ ມັກຄົ້ວຊີ້ນງົວບໍ່?
   여: 네, 좋아해요. 투안 씨는요? ເຈົ້າ, ມັກ. ຕວນເດມັກຄົ້ວຊີ້ນງົວບໍ່?
   남: 전 안 좋아해요. 전 비빔밥을 좋아해요. ຂ້ອຍບໍ່ມັກ, ຂ້ອຍມັກ ບີບິມບັບ.

정답 1. ③ 2. ③ 3. ② 4. ① 5. ②

## 확장 연습 ບົດເຝິກຫັດເພີ່ມເຕີມ



1. 들은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ໄດ້ຍິນ.

   ① 사요.　② 써요.　③ 저요.　④ 짜요.

2. 대화를 듣고 질문에 알맞은 것을 고르십시오.
   ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   여자는 무엇을 좋아합니까? ຜູ້ຍິງຄົນນັ້ນ ມັກຫຍັງ?

   ① 갈비탕　② 불고기　③ 삼계탕　④ 비빔밥

## 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 짜요. ເຄັມ.
2. 남: 미영 씨는 불고기를 좋아해요? ມີຍອງ ມັກຄົ້ນຊີ້ນງົວບໍ່?
   여: 아니요, 저는 불고기를 안 좋아해요. 삼계탕을 좋아해요. ບໍ່, ຂ້ອຍບໍ່ມັກຄົ້ວຊີ້ນງົວ. ຂ້ອຍຊໍາແກຕັງ.
   건우 씨는요? ກອນອູ ເຈົ້າມັກກິນຫຍັງ?
   남: 저는 비빔밥을 좋아해요. ຂ້ອຍມັກບີບິມບັບ.

정답 1. ④ 2. ③



## EPS-TOPIK 읽기 ພາກອ່ານ EPS-TOPIK



ສໍາລັບຂໍ້ 1 ແລະ 2 ແມ່ນເປັນການເບິ່ງຮູບພາບ ແລ້ວເລືອກເອົາສໍານວນທີ່ເໝາະສົມກັບຮູບພາບນັ້ນ. ຈົ່ງເລືອກເອົາສໍານວນທີ່ເໝາະສົມກັບຮູບພາບ.

[1~2] 다음 그림을 보고 맞는 단어나 문장을 고르십시오.
ຈົ່ງເບິ່ງຮູບພາບ ແລ້ວເລືອກເອົາຄໍາສັບ ຫຼື ປະໂຫຍກທີ່ຖືກຕ້ອງກັບຮູບພາບນັ້ນ.

1.



① 쇼핑 ② 배달
③ 약속 ④ 주문

2.



① 자리가 없습니다. ② 손님이 없습니다.
③ 반찬이 없습니다. ④ 식당이 없습니다.



ຕໍ່ໄປນີ້ແມ່ນເລືອກເອົາຄໍາຕອບທີ່ເໝາະສົມກັບຄໍາຖາມ. ຈົ່ງຄິດທົບທວນໃນສິ່ງທີ່ຮຽນມາຂ້າງເທິງນັ້ນ ແລ້ວຕອບຄໍາຖາມລຸ່ມນີ້.

[3~5] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄໍາຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.
가: 몇 분이세요? ມານໍາກັນຈັກຄົນ?
나: ________________.

① 두 명이요 ② 비빔밥 하나요
③ 불고기 일 인분이요 ④ 한 시 삼십 분이요

4.
가: 뭐 드릴까요? ຈະສັ່ງຫຍັງບໍ່?
나: ________________.

① 네, 있어요 ② 조금 매워요
③ 김치찌개 주세요 ④ 아니요, 안 좋아해요

5.
가: 뭐 먹을래요? ຈະກິນຫຍັງ?
나: ________________.

① 지금 먹을래요 ② 제가 먹을래요
③ 비빔밥 먹을래요 ④ 여기에서 먹을래요

정답 1. ④ 2. ① 3. ① 4. ③ 5. ③



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 다음 그림을 보고 맞는 표현을 고르십시오. ຈົ່ງເບິ່ງຮູບພາບດັ່ງຕໍ່ໄປນີ້ ແລ້ວເລືອກເອົາສຳນວນທີ່ຖືກຕ້ອງ.

1. 

① 반찬 ② 메뉴판
③ 숟가락 ④ 젓가락

2. 

① 써요. ② 짜요.
③ 매워요. ④ 시어요.

3. 

① 음식을 골라요. ② 음식을 먹어요.
③ 음식을 배달해요. ④ 음식을 주문해요.

[4~6] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

4. 저는 한국 ________을/를 자주 먹습니다. 특히 불고기와 비빔밥을 아주 좋아합니다.
ປົກກະຕິແລ້ວ ຂ້ອຍມັກກິນອາຫານເກົາຫຼີ. ພິເສດ ຂ້ອຍມັກຫຼາຍທີ່ສຸດ ແມ່ນຄົ້ວຊີ້ນງົວ ແລະ ບິບິມປັບ.

① 과일 ② 노래
③ 영화 ④ 음식

5. 오늘은 일이 많아서 공장에서 밥을 먹기로 했습니다. 그래서 중국집에 전화해서 자장면을 ____________.
ເພາະວ່າມື້ນີ້ ມີວຽກຫຼາຍ ເລີຍຈະກິນເຂົ້າ ຢູ່ໃນໂຮງງານເລີຍ. ສະນັ້ນ ຈະໂທສັ່ງຈາຈັ້ງມຽນ ອາຫານຈີນມາກິນ.

① 남겼습니다 ② 보냈습니다
③ 시켰습니다 ④ 팔았습니다

6. 가: 저녁에 뭐 먹을 거예요? ຕອນແລງ ຈະກິນຫຍັງ?
나: ____________________.

① 많이 먹을 거예요 ② 불고기를 먹을 거예요
③ 식당에서 먹을 거예요 ④ 일요일에 먹을 거예요



1. ④ 2. ② 3. ③ 4. ④ 5. ③ 6. ②




# 날씨가 맑아서 기분이 좋아요

ຍ້ອນອາກາດແຈ່ມໃສ ຂ້ອຍເລີຍອາລົມດີ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ຈຸດປະສົງໃນການຮຽນ | ການສົນທະນາກ່ຽວກັບອາກາດ ແລະ ອາລົມ |
| □ໄວຍາກອນ | -네요, -아서/어서 |
| □ຄຳສັບ ແລະ ສຳນວນຄຳເວົ້າ | ອາກາດ ແລະ ລະດູການ, ອາລົມ ແລະ ຄວາມຮູ້ສຶກ |
| □ຂໍ້ມູນກ່ຽວກັບວັດທະນາທຳ | 4 ລະດູການ ຂອງເກົາຫຼີ |



## 대화 1 ບົດສົນທະນາ 1






ຕໍ່ໄປແມ່ນບົດສົນທະນາຂອງ ຕວນ ແລະ ຣີຮັນ. ທັງສອງຄົນແມ່ນກຳລັງຖາມເຊິ່ງກັນແລະກັນວ່າມີຄັນຮົ່ມຫຼືບໍ່. ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

**계속** ສືບຕໍ່
- 저는 한국어를 계속 공부하고 싶어요.
  ຂ້ອຍຕ້ອງການສືບຕໍ່ຮຽນພາສາເກົາຫຼີ.
- 계속 비가 오면 축구를 할 수 없을 거예요.
  ຖ້າຝົນສືບຕໍ່ຕົກລົງມາ ພວກເຮົາຈະບໍ່ສາມາດເຕະບານໄດ້.

**이따가** ອີກຈັກໜ້ອຍ (ບົດໜຶ່ງ)
- 지금은 바쁘니까 이따가 오세요.
  ຍ້ອນວ່າຕອນນີ້ຍັງຄາວຽກຢູ່, ອີກຈັກໜ້ອຍຈຶ່ງຄ່ອຍມາ.
- 우리 이따가 이야기 좀 할까요?
  ອີກຈັກໜ້ອຍພວກເຮົາລົມກັນຈັກໜ້ອຍໜຶ່ງບໍ່?

투안　비가 계속 오네요.
　　　ຝົນຍັງສືບຕໍ່ຕົກຢູ່ເນາະ!

리한　네, 안 그치네요.
　　　ແມ່ນ, ບໍ່ຢຸດເລີຍ.
　　　투안 씨, 우산 있어요?
　　　ຕວນ, ເຈົ້າມີຄັນຮົ່ມບໍ່?

투안　아니요, 없어요. 리한 씨는요?
　　　ບໍ່, ບໍ່ມີ. ຣີຮັນ ເດ?

리한　저는 있어요. ຂ້ອຍມີ.
　　　이따가 저하고 같이 집에 가요.
　　　ຈັກໜ້ອຍ ກັບບ້ານກັບຂ້ອຍເນາະ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 날씨가 어때요? ອາກາດເປັນແນວໃດ?
2. 투안 씨는 우산이 있어요? ຕວນ ມີຄັນຮົ່ມບໍ?

정답　1. 비가 와요.　2. 아니요, 없어요.





## 어휘 1 ຄຳສັບ 1 날씨와 계절 ອາກາດ ແລະ ລະດູການ



ຢູ່ປະເທດເກົາຫຼີ ແມ່ນມີ 4 ລະດູການ. ໃນແຕ່ລະ ລະດູແມ່ນມີອາກາດຕ່າງກັນ. ສະນັ້ນ, ພວກເຮົາລອງມາເບິ່ງນຳກັນວ່າຄຳສັບທີ່ໃຊ້ສະແດງລະດູການ ແລະ ອາກາດ ມີຫຍັງແດ່?



봄
ລະດູບານໃໝ່ (ລະດູໃບໄມ້ປົ່ງ)



따뜻하다
ອຸ່ນ (ອົບອຸ່ນ)



여름
ລະດູຮ້ອນ



덥다
ຮ້ອນ



가을
ລະດູໃບໄມ້ຫຼົ່ນ



시원하다
ເຢັນສະບາຍ



겨울
ລະດູໜາວ



춥다
ໜາວ

- **봄**은 **따뜻해요**. ລະດູໃບໄມ້ປົ່ງແມ່ນອາກາດອົບອຸ່ນ.
- **가을**은 **시원해요**. ລະດູໃບໄມ້ຫຼົ່ນແມ່ນອາກາດເຢັນສະບາຍ.
- **여름**은 **더워요**. ລະດູຮ້ອນແມ່ນອາກາດຮ້ອນ.
- **겨울**은 **추워요**. ລະດູໜາວແມ່ນອາກາດໜາວ.

날씨가 좋다 ອາກາດດີ
맑다 ແຈ່ມໃສ (ອາກາດປອດໂປ່ງແຈ່ມໃສ)
날씨가 나쁘다 ອາກາດບໍ່ດີ
흐리다 ມືດຄຶ້ມ
비가 오다 ຝົນຕົກ
눈이 오다 ຫິມະຕົກ
바람이 불다 ລົມພັດ
그치다 ຢຸດ



ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

1. 그림을 보고 알맞은 단어를 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

① 
② 
③ 
④ 

㉠ 따뜻하다 ㉡ 덥다 ㉢ 시원하다 ㉣ 춥다



정답 ①㉡ ②㉠ ③㉣ ④㉢

## 문법 1 ໄວຍາກອນ 1 -네요




'-네요' ມັນໃຊ້ຊີ້ບອກເຖິງຄວາມຮູ້ສຶກ ຊາບຊຶ້ງ ຫຼື ຕົກໃຈເລັກໜ້ອຍ ກ່ຽວກັບສິ່ງທີ່ຜູ້ເວົ້າໄດ້ປະສົບພົບພໍ້ ແລ້ວເກີດຄວາມຮູ້ສຶກນຶກຄິດກ່ຽວກັບ ຄວາມຈິງໃໝ່ໆທີ່ໄດ້ຮູ້ມານັ້ນ. ມັນຖືກໃຊ້ຕື່ມທ້າຍຄຳກຳມະ, ຄຳຄຸນນາມ ແລະບໍ່ໄດ້ຈຳແນກວ່າຄຳກຳມະ ແລະ ຄຸນນາມນັ້ນມີຕົວສະກົດຫຼືບໍ່ ເຮົາສາມາດໃຊ້ໄດ້ໝົດ.

- 가: 지금 추워요? ດຽວນີ້ ໜາວບໍ?
  나: 네, 좀 **춥네요**. ເຈົ້າ, ໜາວໜ້ອຍໜຶ່ງເນາະ.
- 가: 모니카 씨는 한국 음식을 참 잘 **만드네요**. ນ້ອຍ ເຮັດອາຫານເກົາຫຼີເກັ່ງເນາະ.
  나: 그래요? 감사합니다. ແມ່ນບໍ? ຂອບໃຈເດີ.



**비교해 보세요** ຈົ່ງປຽບທຽບເບິ່ງ

### ✔ ລະຫວ່າງ '-네요' ກັບ '-는군요'

'-네요' ກັບ '-는군요' ມັນຖືກໃຊ້ໃນກໍລະນີທີ່ເຮົາມີຄວາມຮູ້ສຶກ ຊາບຊຶ້ງກັບຄວາມຈິງໃໝ່ໆທີ່ໄດ້ຮັບຮູ້ມາ. '-네요' ແມ່ນຜູ້ເວົ້າເປັນຄົນປະສົບກັບຄວາມຈິງໃໝ່ໆທີ່ໄດ້ຮັບຮູ້ໂດຍກົງ, ສ່ວນ '-는군요' ນັ້ນ ນອກຈາກຜູ້ເວົ້າຈະເປັນຜູ້ປະສົບພົບພໍ້ໂດຍກົງແລ້ວ ຄວາມຈິງທີ່ໄດ້ຮັບຮູ້ຜ່ານຈາກການຟັງມາກໍສາມາດໃຊ້ໄດ້ຄືກັນ.

- 가: 여기 오는 데 3시간이 걸렸어요.
  나: 아, 여기 오는 데 3시간이나 **걸렸군요**. (O) / 걸렸네요. (X)



ເຂົ້າໃຈການນຳໃຊ້ '-네요' ແລ້ວບໍ? ສະນັ້ນ, ຈົ່ງເບິ່ງຮູບພາບ ແລ້ວເຮັດໃຫ້ປະໂຫຍກຄົບຖ້ວນຄືດັ່ງຕົວຢ່າງ.

**2. 그림을 보고 〈보기〉처럼 '-네요'를 사용해서 문장을 완성하세요.**

ຈົ່ງເບິ່ງຮູບພາບ ແລ້ວໃຊ້ '-네요' ເພື່ອເຮັດໃຫ້ປະໂຫຍກຄົບຖ້ວນຄືດັ່ງຕົວຢ່າງ.

보기



오늘은 날씨가 정말 따뜻하네요. ອາກາດມື້ນີ້ແມ່ນ ອົບອຸ່ນຫຼາຍ.

1) 
오늘은 날씨가 너무 ____________________.

2) 
오늘은 날씨가 너무 ____________________.

3) 
오늘은 날씨가 정말 ____________________.

4) 오늘은 비가 정말 많이 ____________________.

정답 1) 덥네요 2) 춥네요 3) 시원하네요 4) 오네요



## 대화 2 ບົດສົນທະນາ 2

Track 50



ຕວນ ແລະ ຊຣູ ກຳລັງສົນທະນາກ່ຽວກັບລະດູທີ່ຕົນເອງມັກ. ທັງສອງຄົນຈະມັກລະດູໃດ ທີ່ສຸດ? ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

> **참** ແທ້ໆ (ອີ່ຫຼີ)
> - 오늘 참 덥네요. ມື້ນີ້ອາກາດຮ້ອນແທ້ໆ.
> - 영화가 참 재미있어요. ໜັງແມ່ນມ່ວນແທ້ໆ.

투안 오늘은 날씨가 **참** 좋네요.
ມື້ນີ້ ອາກາດ ດີແທ້ໆ.

수루 네, 요즘은 날씨가 **따뜻해서** 기분이 정말 좋아요.
ແມ່ນແລ້ວ, ຍ້ອນວ່າ ຊ່ວງນີ້ ອາກາດອົບອຸ່ນ ຂ້ອຍຈຶ່ງອາລົມດີຫຼາຍ.

투안 수루 씨는 봄을 좋아해요?
ຊຣູ, ເຈົ້າມັກລະດູໃບໄມ້ປົ່ງບໍ?

> **무슨** ຫຍັງ, ໃດ
> - 한국에서 무슨 일을 하고 싶어요? ເຈົ້າຢາກເຮັດວຽກຫຍັງຢູ່ເກົາຫຼີ?
> - 무슨 과일을 좋아해요? ເຈົ້າມັກໝາກໄມ້ຫຍັງ?

수루 네, 저는 봄을 가장 좋아해요.
ແມ່ນແລ້ວ, ຂ້ອຍມັກລະດູໃບໄມ້ປົ່ງທີ່ສຸດ.

투안 씨는 **무슨** 계절을 가장 좋아해요?
ຕວນເດ ມັກລະດູໃດຫຼາຍທີ່ສຸດ?

투안 저는 겨울을 가장 좋아해요.
ຂ້ອຍມັກລະດູໜາວຫຼາຍທີ່ສຸດ.

ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 오늘은 날씨가 어때요? ມື້ນີ້ ອາກາດເປັນແນວໃດ?
2. 투안 씨는 무슨 계절을 좋아해요? ຕວນ ມັກລະດູໃດ?
3. 수루 씨는 왜 기분이 좋아요? ເປັນຫຍັງຊຣູ ຈຶ່ງອາລົມດີ?

정답 1. 참 좋아요. 2. 겨울을 좋아해요. 3. 요즘 날씨가 따뜻해서 기분이 좋아요.



## 어휘 2 ຄຳສັບ 2 — 기분과 감정 ອາລົມ ແລະ ຄວາມຮູ້ສຶກ



ລອງມາເບິ່ງນຳກັນວ່າ ຄຳສັບທີ່ໃຊ້ສະແດງເຖິງ ອາລົມ ແລະ ຄວາມຮູ້ສຶກມີຫຍັງແດ່?



기분이 좋다
ອາລົມດີ



기쁘다
ດີໃຈ



즐겁다
ມ່ວນຊື່ນ



신나다
ຕື່ນເຕັ້ນ



기분이 나쁘다
ອາລົມບໍ່ດີ



슬프다
ເສົ້າ



피곤하다
ເມື່ອຍ



졸리다
ເຫງົານອນ

외롭다 ເຫງົາ    우울하다 ຊຶມເສົ້າ    상쾌하다 ສົດຊື່ນ    행복하다 ມີຄວາມສຸກ

- 시험을 잘 쳐서 **기분이 좋아요**. ຍ້ອນຂ້ອຍເສັງໄດ້ ຂ້ອຍເລີຍອາລົມດີ.
- 친구한테서 편지를 받아서 정말 **기뻐요**. ຍ້ອນຂ້ອຍໄດ້ຮັບຈົດໝາຍຈາກໝູ່ ຂ້ອຍເລີຍດີໃຈຫຼາຍ.
- 시험을 못 쳐서 **기분이 나빠요**. ຍ້ອຍຂ້ອຍເສັງບໍ່ໄດ້ດີ ຂ້ອຍເລີຍອາລົມບໍ່ດີ.
- 영화가 너무 **슬퍼서** 울었어요. ຂ້ອຍໄຫ້ ຍ້ອນໜັງມັນເສົ້າຫຼາຍ.
- 일을 많이 해서 **피곤해요**. ຂ້ອຍເຮັດວຽກຫຼາຍເລີຍເມື່ອຍ.
- 어제 잠을 못 자서 **졸려요**. ມື້ວານຂ້ອຍນອນບໍ່ຫຼັບ, ເລີຍເຫງົານອນ.

ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림을 보고 알맞은 단어를 연결하세요.
ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.



①　②　③　④

㉠ 슬프다　㉡ 외롭다　㉢ 피곤하다　㉣ 기분이 좋다

정답 ① ㉢ ② ㉣ ③ ㉠ ④ ㉡

## 문법 2 ໄວຍາກອນ 2 -아서/어서




'-아서/어서' ມັນຖືກໃຊ້ຕື່ມທ້າຍຄຳກຳມະ ຫຼື ຄຳຄຸນນາມເຊິ່ງປະໂຫຍກໜ້າແມ່ນຊີ້ບອກເຖິງເຫດຜົນທີ່ເກີດຂຶ້ນໃນປະໂຫຍກຫຼັງ.

| ㅏ, ㅗ → **-아서** | ㅓ, ㅜ, ㅣ ເປັນຕົ້ນ → **-어서** | 하다 → **해서** |
|---|---|---|
| 가다 → **가서**<br>좋다 → 좋**아서** | 먹다 → 먹**어서**<br>있다 → 있**어서** | 공부하다 → 공부**해서**<br>친절하다 → 친절**해서** |

- 배가 **아파서** 병원에 갔어요. ຂ້ອຍໄດ້ໄປໂຮງໝໍ ເພາະວ່າຂ້ອຍເຈັບທ້ອງ.
- 약속이 **있어서** 먼저 집에 갔어요. ລາວໄດ້ກັບເມືອເຮືອນກ່ອນ ເພາະວ່າລາວມີນັດ.



### 대조적 정보 ການປຽບທຽບ

'-아서/어서' ມັນມີຄວາມວ່າ 'ເພາະວ່າ' ມີໜ້າທີ່ໃຊ້ເຊື່ອມສອງປະໂຫຍກເຂົ້າກັນ. ໃນພາສາລາວປະໂຫຍກໜ້າເປັນປະໂຫຍກບອກກ່າວ ໂດຍເອົາ "ເພາະວ່າ" ມາຂັ້ນກາງເພື່ອຊີ້ບອກເຫດຜົນຂອງປະໂຫຍກຫຼັງ. ແຕ່ໃນພາສາເກົາຫຼີ ແມ່ນຈະຢູ່ດ້ານໜ້າຂອງ '-아서/어서'.

- 비가 많이 **와서** 행사가 취소되었다. ວຽກຖືກຍົກເລີກ ເພາະວ່າຝົນຕົກແຮງ.



ເຂົ້າໃຈການໃຊ້ '-아서/어서' ແລ້ວບໍ? ສະນັ້ນ ຈົ່ງລອງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.

**2. 그림을 보고 〈보기〉처럼 '-아서/어서'를 사용해서 대화를 완성하세요**

ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການນຳໃຊ້ ໄວຍາກອນ '-아서/어서' ຄືດັ່ງຕົວຢ່າງ.






가: 무슨 계절을 좋아해요? ເຈົ້າມັກລະດູໃດ?
나: 날씨가 따뜻해서 봄을 좋아해요.
ຂ້ອຍມັກລະດູໃບໄມ້ປົ່ງຍ້ອນວ່າອາກາດອົບອຸ່ນ.

1) 

가: 무슨 계절을 좋아해요?
나: 날씨가 ________________ 가을을 좋아해요.

2) 

가: 무슨 계절을 좋아해요?
나: 눈이 ________________ 겨울을 좋아해요.

3) 

가: 오늘 기분이 어때요?
나: 날씨가 ________________ 기분이 좋아요.

4) 

가: 오늘 기분이 어때요?
나: 비가 ________________ 기분이 안 좋아요.

정답 1) 시원해서 2) 와서 3) 좋아서 4) 와서



## 활동 ກິດຈະກຳ

〈보기〉처럼 여러분 나라의 계절과 날씨를 소개해 보세요.

ທຸກຄົນ ລອງແນະນຳກ່ຽວກັບອາກາດ ແລະ ລະດູການຂອງປະເທດຕົນເອງຄືກັບຕົວຢ່າງ.



보기 ຕົວຢ່າງ

### 한국의 계절

한국에는 봄, 여름, 가을, 겨울이 있습니다. 봄은 날씨가 따뜻합니다. 여름은 날씨가 덥습니다. 그리고 비가 많이 옵니다. 가을은 날씨가 시원합니다. 겨울은 날씨가 춥습니다. 그리고 눈이 옵니다.

### ລະດູການຂອງປະເທດເກົາຫຼີ

ຢູ່ປະເທດເກົາຫຼີແມ່ນມີລະດູ ໃບໄມ້ປົ່ງ, ລະດູຮ້ອນ, ລະດູໃບໄມ້ຫຼົ່ນ ແລະ ລະດູໜາວ. ໃນລະດູໃບໄມ້ປົ່ງອາກາດ ແມ່ນອົບອຸ່ນ. ລະດູຮ້ອນແມ່ນ ອາກາດຮ້ອນ ແລະ ມີຝົນຕົກຫຼາຍ. ສໍາລັບລະດູໃບໄມ້ຫຼົ່ນ ແມ່ນອາກາດເຢັນສະບາຍ. ແລະ ໃນລະດູໜາວແມ່ນອາກາດໜາວ ແລະ ມີຫິມະຕົກ.

ຢູ່ປະເທດລາວ ແມ່ນຕ່າງກັບປະເທດເກົາຫຼີ ຍ້ອນມີແຕ່ ລະດູແລ້ງ ແລະ ລະດູຝົນແມ່ນບໍ? ຢູ່ເກົາຫຼີ ແມ່ນມີ 4 ລະດູ ແລະ ແຕ່ລະດູກໍມີອາກາດທີ່ຕ່າງກັນ. ລອງຕອບຄຳຖາມດັ່ງຕໍ່ໄປນີ້.

✚ 알맞은 말에 ✓하세요. ຈົ່ງຕື່ມເຄື່ອງໝາຍ ✓ ໃສ່ຄຳເວົ້າທີ່ເໝາະສົມ.

| | | |
|---|---|---|
| (1)봄은 날씨가<br>ອາກາດໃນລະດູໃບໄມ້ປົ່ງ | □ 따뜻합니다.<br>ອົບອຸ່ນ. | □ 시원합니다.<br>ເຢັນສະບາຍ. |
| (2)겨울은 춥습니다. 그리고<br>ລະດູໜາວແມ່ນໜາວ. ແລະ | □ 비가 옵니다.<br>ຝົນຕົກ. | □ 눈이 옵니다.<br>ຫິມະຕົກ. |
| (3)날씨가 아주 덥습니다. 지금은<br>ອາກາດຮ້ອນຫຼາຍ. ຕອນນີ້ແມ່ນ | □ 여름입니다.<br>ລະດູຮ້ອນ. | □ 가을입니다.<br>ລະດູໃບໄມ້ຫຼົ່ນ. |

정답 (1) 따뜻합니다. (2) 눈이 옵니다. (3) 여름입니다.



### 퀴즈 ຄຳທວາຍ

✚다음 그림을 보고 생각나는 계절은 뭐예요?

ເບິ່ງຮູບພາບດັ່ງຕໍ່ໄປນີ້ ແລ້ວຄິດເບິ່ງວ່າແມ່ນລະດູຫຍັງ?

   

정답 여름



## 정보 ຂໍ້ມູນທົ່ວໄປ







| 겨울 | ລະດູໜາວ | 봄 | ລະດູໃບໄມ້ປົ່ງ | 여름 | ລະດູຮ້ອນ | 가을 | ລະດູໃບໄມ້ຫຼົ່ນ |
|---|---|---|---|---|---|---|---|
| 12월 | ເດືອນ 12 | 3월 | ເດືອນ 3 | 6월 | ເດືອນ 6 | 9월 | ເດືອນ 9 |
| 1월 | ເດືອນ 1 | 4월 | ເດືອນ 4 | 7월 | ເດືອນ 7 | 10월 | ເດືອນ 10 |
| 2월 | ເດືອນ 2 | 5월 | ເດືອນ 5 | 8월 | ເດືອນ 8 | 11월 | ເດືອນ 11 |

### 내용 확인 ກວດຄືນເນື້ອໃນ

✚ 빈칸에 알맞은 말을 쓰세요. ຈົ່ງຂຽນຄຳເວົ້າທີ່ເໝາະສົມ ໃສ່ບ່ອນຫວ່າງ.

(1) 12월부터 2월까지는 '　　'입니다. ເດືອນ 12 ຫາ ເດືອນ 2 ແມ່ນ 'ລະດູໜາວ'.

(2) 겨울에는 '　'이 옵니다. ລະດູໜາວແມ່ນ'ຫິມະ'ຕົກ.

(3) 여름은 날씨가 '　　　　'. ໃນລະດູຮ້ອນແມ່ນ 'ຮ້ອນ'.

정답 (1) 겨울 (2) 눈 (3) 덥습니다



# EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແມ່ນຄຳສັບທີ່ບົ່ງບອກເຖິງລະດູການ, ຂໍ້ 2 ແມ່ນຄຳສັບທີ່ບົ່ງບອກເຖິງ ອາກາດ. ຈົ່ງຟັງໃຫ້ດີ ແລ້ວເລືອກຄຳສັບທີ່ໄດ້ຍິນ.

[1~2] 들은 것을 고르십시오. ຈົ່ງເລືອກເອົາຄຳຕອບທີ່ໄດ້ຍິນ.




1. ① 봄 ② 여름 ③ 가을 ④ 겨울

2. ① 더워요 ② 추워요 ③ 맑아요 ④ 흐려요



ຕໍ່ໄປແມ່ນຄຳຖາມກ່ຽວກັບ ການເລືອກເອົາຄຳຕອບ ຈາກສິ່ງທີ່ໄດ້ຍິນຈາກບົດສົນທະນາ. ຈົ່ງອ່ານເບິ່ງເນື້ອໃນຄຳຖາມເທື່ອໜຶ່ງ ກ່ອນທີ່ຈະຟັງບົດສົນທະນາ.

[3~5] 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ເໝາະສົມກັບແຕ່ລະຄຳຖາມ.

3. 지금은 무슨 계절입니까? ຕອນນີ້ ແມ່ນລະດູຫຍັງ?
   ① 봄 ② 여름
   ③ 가을 ④ 겨울

4. 오늘 날씨는 어떻습니까? ມື້ນີ້ ອາກາດເປັນແນວໃດ?
   ① 비가 옵니다. ② 눈이 옵니다.
   ③ 날씨가 좋습니다. ④ 날씨가 흐립니다.

5. 남자는 무슨 계절을 좋아합니까? ຜູ້ຊາຍຄົນນັ້ນ ມັກລະດູໃດ?
   ① 봄 ② 여름
   ③ 가을 ④ 겨울



### 듣기 대본 ເນື້ອໃນບົດຟັງ

1. 남: 가을 ລະດູໃບໄມ້ປົ່ງ
2. 여: 추워요. ໜາວ.
3. 남: 오늘 날씨가 많이 춥네요. ມື້ນີ້ອາກາດໜາວເນາະ!
   여: 하지만 눈이 와서 기분이 너무 좋아요. ແຕ່ວ່າຍ້ອນຫິມະຕົກ ຂ້ອຍຈຶ່ງອາລົມດີຫຼາຍ.
4. 남: 지금 비가 와요? ຕອນນີ້ ຝົນຕົກບໍ?
   여: 아니요. 안 와요. 날씨가 아주 맑아요. ບໍ່, ບໍ່ຕົກ. ອາກາດແຈ່ມໃສຫຼາຍ.
5. 남: 수미 씨는 무슨 계절을 좋아해요? ຊູມີ, ເຈົ້າມັກລະດູໃດຫຼາຍທີ່ສຸດ?
   여: 저는 여름을 좋아해요. 투안 씨는요? ຂ້ອຍມັກລະດູຮ້ອນ. ແລ້ວຕວນເດ?
   남: 전 봄을 좋아해요. ຂ້ອຍມັກລະດູໃບໄມ້ປົ່ງ.

정답 1. ③ 2. ② 3. ④ 4. ③ 5. ①

## 확장 연습 ບົດເຝິກຫັດເພີ່ມເຕີມ



1. 들은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ໄດ້ຍິນ.

   ① 더워요. ② 맑아요. ③ 추워요. ④ 흐려요.

2. 대화를 듣고 질문에 알맞은 것을 고르십시오.
   ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   부산은 날씨가 어때요? ຢູ່ເມືອງບູຊານ ອາກາດເປັນແນວໃດ?

   ① 눈이 와요. ② 비가 와요.
   ③ 날씨가 좋아요. ④ 날씨가 나빠요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 맑아요. ອາກາດແຈ່ມໃສ.
2. 남: 부산은 지금 날씨가 좋아요? ຢູ່ເມືອງບູຊານ ຕອນນີ້ອາກາດດີບໍ?
   여: 아니요, 안 좋아요. 바람이 불고 추워요. ບໍ່, ອາກາດບໍ່ດີ. ມີລົມພັດ ແລະ ໜາວ.

정답 1. ② 2. ④



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ແມ່ນສຳນວນທີ່ສະແດງເຖິງອາກາດ, ຂໍ້ 2 ແມ່ນສຳນວນທີ່ສະແດງເຖິງອາລົມ ຫຼື ຄວາມຮູ້ສຶກ.
ຈົ່ງເລືອກ ສຳນວນທີ່ຖືກຕ້ອງກັບຮູບພາບ.

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1.



① 더워요. ② 추워요.
③ 흐려요. ④ 시원해요.

2.

① 슬픕니다. ② 외롭습니다.
③ 행복합니다. ④ 피곤합니다.



ຕໍ່ໄປ ແມ່ນຄຳຖາມກ່ຽວກັບອາກາດ ແລະ ລະດູການ. ຈົ່ງຄິດທົບທວນເຖິງສິ່ງທີ່ຮຽນມາແລ້ວຕອບຄຳຖາມ.

[3~5] 빈칸에 들어갈 가장 알맞은 것을 고르십시오.
ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3. 필리핀에는 겨울이 없어요. 그래서 ______________________.
ຢູ່ປະເທດຟີລິບປິນແມ່ນບໍ່ມີລະດູໜາວ. ສະນັ້ນ ຫິມະບໍ່ຕົກ.

① 너무 추워요 ② 눈이 안 와요 ③ 겨울이 있어요 ④ 날씨가 흐려요

4. 가: ______________________?
나: 아주 좋아요. 맑아요. ມັກຫຼາຍ. ອາກາດແຈ່ມໃສ.

① 가을이 없어요 ② 비가 많이 와요
③ 오늘 날씨가 어때요 ④ 무슨 계절을 좋아해요

5. 여름은 날씨가 ______________ 저는 여름을 안 좋아해요.
ຍ້ອນອາກາດຮ້ອນ ໃນລະດູຮ້ອນ, ຂ້ອຍຈຶ່ງບໍ່ມັກລະດູຮ້ອນ.

① 없어서 ② 있어서 ③ 더워서 ④ 추워서

정답 1. ④ 2. ③ 3. ② 4. ③ 5. ③



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1. 

① 봄　② 여름
③ 가을　④ 겨울

2. 

① 더워요.　② 추워요.
③ 눈이 와요.　④ 비가 와요.

3. 

① 신나요.　② 졸려요.
③ 피곤해요.　④ 기분이 나빠요.

[4~6] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

4. 주말에 ________이/가 좋으면 친구들과 함께 축구를 하려고 합니다. 비가 안 오면 좋겠습니다. ໃນທ້າຍອາທິດ ຖ້າຫາກອາກາດດີ ມີແຜນຈະຫຼິ້ນກິລາເຕະບານກັບໝູ່ເພື່ອນ ຖ້າຝົນບໍ່ຕົກຄົງຈະດີ.

① 계절　② 날씨
③ 요일　④ 휴일

5. 지난주에는 날씨가 따뜻했는데 이번 주부터 날씨가 ________. 두꺼운 옷을 입어야 할 것 같습니다.
ອາທິດແລ້ວນີ້ ອາກາດອົບອຸ່ນ, ແຕ່ວ່ານັບແຕ່ອາທິດນີ້ມາແມ່ນ ອາກາດໜາວຂຶ້ນ. ສິງໃສວ່າຈະຕ້ອງນຸ່ງເຄື່ອງ ໜາຂຶ້ນ.

① 더워졌습니다　② 좋아졌습니다
③ 추워졌습니다　④ 시원해졌습니다.

6. 한국에 ________눈을 처음 봤습니다. 우리나라는 춥지 않아서 눈이 오지 않기 때문입니다.
ຂ້ອຍມາເກົາຫຼີ ແລະ ໄດ້ເຫັນຫິມະເປັນຄັ້ງທຳອິດ. ຍ້ອນວ່າຢູ່ປະເທດຂອງພວກເຮົາແມ່ນບໍ່ໜາວ, ຫິມະຈຶ່ງບໍ່ຕົກ.

① 오면　② 와서
③ 오게　④ 와도

정답 1. ④ 2. ③ 3. ② 4. ② 5. ③ 6. ②



# 16 시간 있을 때 주로 테니스를 치러 가요

## ເມື່ອມີເວລາ ປົກກະຕິ ຂ້ອຍໄປຫຼິ້ນກິລາເທນນິດສ໌

**학습 안내**
ຄຳແນະນຳ ໃນການຮຽນ

- □ ຈຸດປະສົງໃນການຮຽນ — ການເວົ້າກ່ຽວກັບກິດຈະກຳໃນເວລາຫວ່າງ
- □ ໄວຍາກອນ — -(으)ㄹ 때, -(으)러 가다
- □ ຄຳສັບ ແລະ ສຳນວນຄຳເວົ້າ — ກິດຈະກຳໃນເວລາຫວ່າງ, ການອອກກຳລັງກາຍ
- □ ຂໍ້ມູນກ່ຽວກັບວັດທະນາທຳ — ໂປຼແກຣມກິດຈະກຳໃນເວລາຫວ່າງ



## 대화 1 ບົດສົນທະນາ 1






ຕໍ່ໄປ ເປັນບົດສົນທະນາ ລະຫວ່າງ ຊຸຣຸ ແລະ ຕວນ. ທັງສອງຄົນ ຈະລົມກັນກ່ຽວກັບກິດ ຈະກຳໃນເວລາຫວ່າງໃນປັດຈຸບັນ. ກ່ອນອື່ນ ຈົ່ງຟັງບົດສົນທະນາລະຫວ່າງສອງຄົນນີ້ ກ່ອນສອງຄັ້ງ ແລ້ວເວົ້າຕາມ.

투안 수루 씨는 취미가 뭐예요?
ຊຸຣຸ ກິດຈະກຳໃນເວລາຫວ່າງ ຂອງເຈົ້າແມ່ນຫຍັງ?

수루 제 취미는 독서예요.
ກິດຈະກຳໃນເວລາຫວ່າງ ຂອງຂ້ອຍ ແມ່ນການອ່ານປຶ້ມ.
투안 씨는 취미가 뭐예요?
ຕວນເດ ກິດຈະກຳໃນເວລາຫວ່າງ ແມ່ນຫຍັງ?

투안 전 낚시를 좋아해요.
ຂ້ອຍ ມັກການຕຶກເບັດ.
그래서 시간이 있을 때 낚시하러 자주 가요.
ສະນັ້ນ ເມື່ອໃດມີເວລາ ແມ່ນຈະໄປຕຶກເບັດສະເໝີ.

**취미** ກິດຈະກຳໃນເວລາຫວ່າງ
ເປັນວຽກ ຫຼື ກິດຈະກຳທີ່ມັກ ເມື່ອໄດ້ເຮັດແລ້ວມີຄວາມສຸກ.
- 제 취미는 낚시예요.
  ກິດຈະກຳໃນເວລາຫວ່າງຂ້ອຍ ແມ່ນການຕຶກເບັດ.
- 노이 씨는 취미가 많아요.
  ນ້ອຍ ມີກິດຈະກຳໃນເວລາຫວ່າງຫຼາຍ.

**시간이 있다 ⇔ 시간이 없다**
ມີເວລາ ⇔ ບໍ່ມີເວລາ
- 가: 월요일에 시간이 있어요?
  ມື້ວັນຈັນ ເຈົ້າມີເວລາບໍ?
  나: 미안해요. 월요일에는 바빠서 시간이 없어요.
  ຂໍໂທດ. ມື້ວັນຈັນ ຄາວຽກ ບໍ່ມີເວລາ.
- 언제 시간이 있어요?
  ເມື່ອໃດ ເຈົ້າມີເວລາບໍ?



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 수루 씨의 취미는 뭐예요? ຊຸຣຸ ກິດຈະກຳໃນເວລາຫວ່າງຂອງເຈົ້າແມ່ນຫຍັງ?
2. 투안 씨는 시간이 있을 때 뭐 해요? ຕວນເດ ກິດຈະກຳໃນເວລາຫວ່າງ ຂອງເຈົ້າແມ່ນຫຍັງ?

정답 1. 독서예요. 2. 낚시하러 가요.

**Tip 빈도 부사** ຄຳກຳມະວິເສດທີ່ໃຊ້ບອກຄວາມຖີ່

항상/언제나 ເລື້ອຍໆ, ເມື່ອໃດກໍໄດ້ 주로/보통 ປົກກະຕິ/ ສະເໝີ 자주 ເລື້ອຍໆ 가끔 ບາງຄັ້ງຄາວ



##  어휘 1 ຄຳສັບ 1 — 취미 ກິດຈະກຳໃນເວລາຫວ່າງ



ຕໍ່ໄປ ເປັນສຳນວນກ່ຽວກັບ ກິດຈະກຳໃນເວລາຫວ່າງ ແລະ ຄຳສັບອື່ນທີ່ກ່ຽວຂ້ອງ. ພວກເຮົາລອງໄປຮຽນຮູ້ນຳກັນເບິ່ງວ່າ ມີຫຍັງແດ່?

| | | | |
|---|---|---|---|
|  독서하다 ອ່ານປຶ້ມ |  낚시하다 ຕຶກເບັດ |  여행하다 ທ່ອງທ່ຽວ |  등산하다 ໄຕ່ພູ |
|  사진을 찍다 ຖ່າຍຮູບ |  외국어를 배우다 ຮຽນພາສາຕ່າງປະເທດ |  콘서트를 보다 ຊົມຄອນເສີດ |  운동 경기를 보다 ຊົມການແຂ່ງຂັນກິລາ |
|  음악을 듣다 ຟັງດົນຕີ |  기타를 치다 ຫຼິ້ນກີຕ້າ |  피아노를 치다 ຫຼິ້ນປີອາໂນ |  춤을 추다 ຟ້ອນ (ເຕັ້ນ) |

### 'ㄷ' ອະປົກກະຕິ

ສຳລັບຄຳສັບທີ່ລົງທ້າຍດ້ວຍ 'ㄷ' ເມື່ອເຊື່ອມກັບສະຫຼະ ມັນຈະປ່ຽນເປັນ 'ㄹ'.

듣(다) + 어요 = 들어요,  걷(다) + 을래요 = 걸을래요



ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

1. 그림을 보고 알맞은 표현을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ສຳນວນທີ່ເໝາະສົມ.

①   ②   ③   ④ 

㉠ 낚시하다  ㉡ 독서하다  ㉢ 등산하다  ㉣ 여행하다

정답 ①㉡  ②㉠  ③㉣  ④㉢

## 문법 1 ໄວຍາກອນ 1 -(으)ㄹ 때

G16-1

'-(으)ㄹ 때' ມັນຖືກໃຊ້ຕື່ມທ້າຍຄຳກຳມະ, ຄຳຄຸນນາມ ເພື່ອຊີ້ບອກເຖິງຊ່ວງເວລາທີ່ເກີດມີການກະທຳ.

| 자음(ພະຍັນຊະນະ) → **-을 때** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-ㄹ 때** |
|---|---|
| 읽다 → 읽**을 때** | 자다 → **잘 때**<br>놀다 → **놀 때** |

- 가: 운동을 매일 해요? ເຈົ້າອອກກຳລັງກາຍທຸກມື້ບໍ?
  나: 아니요, 시간이 **있을 때** 해요. ບໍ່, ເມື່ອຂ້ອຍມີເວລາ ຂ້ອຍຈຶ່ງອອກກຳລັງກາຍ.
- 가: 그 사람을 언제 만났어요? (ເຈົ້າ) ພົບກັບລາວເມື່ອໃດ?
  나: 서울 **여행할 때** 만났어요. ຂ້ອຍພົບຕອນໄປທ່ຽວໂຊລ.



ເຂົ້າໃຈການໃຊ້ '-(으)ㄹ 때' ແລ້ວບໍ? ສະນັ້ນ ຈົ່ງລອງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນຄືດັ່ງຕົວຢ່າງ.

**2. 그림을 보고 〈보기〉처럼 '-(으)ㄹ 때'를 사용해서 대화를 완성하세요.**

ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການນຳໃຊ້ ໄວຍາກອນ '-(으)ㄹ 때' ຄືດັ່ງຕົວຢ່າງ.






가: 날씨가 좋을 때 뭐 해요? ເມື່ອອາກາດດີ ເຈົ້າເຮັດຫຍັງ?
나: 등산해요. ຂ້ອຍໄຕ່ພູ.

1) 가: ______________ 뭐 해요?
나: 집에서 책을 읽어요.



2) 가: ______________ 뭐 해요?
나: 노래를 불러요.



3) 가: ______________ 뭐 해요?
나: 음악을 들어요.

4) 가: ______________ 뭐 해요?
나: 많이 자요.

정답 1) 비가 올 때 2) 기분이 좋을 때 3) 화가 날 때 4) 피곤할 때



## 대화 2 ບົດສົນທະນາ 2

Track 53



ມິນຊູ ແລະ ຣີຮັນ ກຳລັງລົມກັນກ່ຽວກັບ ກິດຈະກຳໃນທ້າຍອາທິດ. ພວກເຂົາກຳລັງເວົ້າກ່ຽວກັບ ຫຍັງ? ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

민수 **리한 씨는 주말에 보통 뭐 해요?**
ຣີຮັນ ປົກກະຕິແລ້ວ ເຈົ້າເຮັດຫຍັງ ໃນທ້າຍອາທິດ?

리한 **전 운동을 좋아해서 주로 운동해요.**
ຂ້ອຍມັກອອກກຳລັງກາຍ ສະນັ້ນ ຂ້ອຍອອກກຳລັງກາຍເລື້ອຍໆ.

민수 **무슨 운동을 가장 좋아해요?**
ເຈົ້າມັກອອກກຳລັງກາຍປະເພດໃດຫຼາຍທີ່ສຸດ?

리한 **축구를 가장 좋아해요.**
ຂ້ອຍ ມັກເຕະບານຫຼາຍທີ່ສຸດ.

민수 **그래요? 그러면 내일 저하고 같이 축구하러 갈래요?**
ແມ່ນບໍ? ຖ້າແນວນັ້ນ ມື້ອື່ນ ໄປຫຼິ້ນກິລາບານເຕະກັບຂ້ອຍບໍ?

리한 **좋아요. 같이 가요.**
ດີ, ໄປຫຼິ້ນນຳກັນ.
**저도 축구를 하고 싶었어요.**
ຂ້ອຍກໍຢາກຫຼິ້ນກິລາບານເຕະຄືກັນ.

> **ຄຳນາມ 하고 같이**
> ໃຊ້ຕາມຫຼັງຂອງຄຳນາມ ຫຼື ບຸກຄົນ ໂດຍມີຄວາມໝາຍເຖິງການກະທຳ ແລະ ເຮັດວຽກຮ່ວມກັບຄຳນາມທາງໜ້ານັ້ນ.
> - 오늘은 친구하고 같이 등산해요.
>   ມື້ນີ້ ຂ້ອຍໄປໄຕ່ພູກັບໝູ່ເພື່ອນ.
> - 어제 동생하고 같이 시장에 갔어요.
>   ມື້ວານ ຂ້ອຍໄດ້ໄປຕະຫຼາດກັບນ້ອງ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 리한 씨는 주말에 보통 뭐 해요? ຣີຮັນ ປົກກະຕິແລ້ວ ວັນທ້າຍອາທິດ ເຈົ້າເຮັດຫຍັງ?
2. 두 사람은 내일 뭘 할 거예요? ມື້ອື່ນ ສອງຄົນນີ້ ຈະເຮັດຫຍັງ?

정답 1. 운동해요. 2. 축구를 할 거예요.

### Tip 취미 활동 동호회 ສະໂມສອນ ກິດຈະກຳໃນເວລາຫວ່າງ

같은 취미를 가진 사람들이 취미 활동을 같이 하는 모임입니다. ເປັນການລວມຕົວຂອງຄົນທີ່ມີກິດຈະກຳໃນເວລາຫວ່າງທີ່ຄືກັນ.


축구 동호회
ສະໂມສອນບານເຕະ


등산 동호회
ສະໂມສອນໄຕ່ພູ


사진 동호회
ສະໂມສອນຖ່າຍຮູບ


요리 동호회
ສະໂມສອນແຕ່ງກິນ



## 어휘 2 ຄຳສັບ 2 　　운동 ກິລາ



ຄຳກັບກ່ຽວກັບກິລາວ່າ ມີຫຍັງແດ່ ພວກເຮົາລອງໄປຮຽນຮູ້ນຳກັນເບິ່ງບໍ?



축구하다
ເຕະບານ



농구하다
ຫຼິ້ນກິລາ ບານບ້ວງ



야구하다
ຫຼິ້ນກິລາ ເບດສ໌ບໍ



수영하다
ຫຼິ້ນກິລາ ລ່ອຍນ້ຳ



테니스를 치다
ຫຼິ້ນກິລາ ເທັນນິດສ໌



배드민턴을 치다
ຕີດອກປີກໄກ່



볼링을 치다
ຫຼິ້ນກິລາ ໂບລິງ



골프를 치다
ຕີກ໋ອບ



스케이트를 타다
ຂີ່ສະເກັດທ໌



스키를 타다
ຂີ່ສະກີ



자전거를 타다
ຂີ່ລົດຖີບ



ຈົ່ງຄຶດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림을 보고 알맞은 표현을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ສຳນວນທີ່ເໝາະສົມ.




정답 ①㉡ ②㉢ ③㉣ ④㉠

## 문법 2 ໄວຍາກອນ 2 　 -(으)러 가다/오다




'-(으)러' ເຮົາໃຊ້ຕື່ມທ້າຍຄຳກຳມະເພື່ອຊີ້ບອກຈຸດປະສົງທີ່ຈະໄປສະຖານທີ່ໃດໜຶ່ງ, '-(으)러' ມັກໃຊ້ກັບຄຳກຳມະເຄື່ອນທີ່ ເຊັ່ນ '나가다, 나오다, 들어가다, 들어오다, 올라가다, 올라오다, 내려가다, 내려오다, 다니다' ເປັນຕົ້ນ. ລວມທັງ '가다, 오다' ນຳ.

| 자음(ພະຍັນຊະນະ) → **-으러 가다/오다** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-러 가다/오다** |
|---|---|
| 찾다 → 찾**으러 가다/오다** | 쉬다 → 쉬**러 가다/오다**<br>놀다 → 놀**러 가다/오다** |

- 주말에 친구하고 같이 **운동하러 갈 거예요**. ທ້າຍອາທິດ ຂ້ອຍຈະໄປອອກກຳລັງກາຍກັບໝູ່ເພື່ອນ.
- 가: 시간 있을 때 뭐 해요? ຍາມມີເວລາວ່າງ, (ເຈົ້າ) ເຮັດຫຍັງ?
  나: 주로 사진 **찍으러 가요**. (ຂ້ອຍ) ມັກໄປຖ່າຍຮູບ.

'-(으)러' ເຮົາໃຊ້ຕື່ມທ້າຍຄຳກຳມະເພື່ອຊີ້ບອກຈຸດປະສົງທີ່ຈະໄປສະຖານທີ່ໃດໜຶ່ງ, ໃຊ້ກັບຄຳກຳມະທີ່ມີການເຄື່ອນທີ່ ເຊັ່ນ: '가다, 오다, 나가다, 나오다, 들어가다, 들어오다, 올라가다, 올라오다, 내려가다, 내려오다, 다니다' ເປັນຕົ້ນ.



ເຂົ້າໃຈການໃຊ້ '-(으)러 가다/오다' ແລ້ວບໍ? ສະນັ້ນ ຈົ່ງລອງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນຄືດັ່ງຕົວຢ່າງ.

2. 그림을 보고 〈보기〉처럼 '-(으)러 가다'를 사용해서 대화를 완성하세요.
ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການນຳໃຊ້ ໄວຍາກອນ '-(으)러 가다' ຄືດັ່ງຕົວຢ່າງ.






가: 시간이 있을 때 뭐 해요? ເມື່ອມີເວລາ ເຈົ້າເຮັດຫຍັງ?
나: 축구하러 가요. ຂ້ອຍ ໄປຫຼິ້ນກິລາເຕະບານ.

1) 가: 시간이 있을 때 뭐 해요?
나: ______________________.



2) 가: 시간이 있을 때 뭐 해요?
나: ______________________.



3) 가: 시간이 있을 때 뭐 해요?
나: ______________________.

4) 가: 시간이 있을 때 뭐 해요?
나: ______________________.

정답 1) 농구하러 가요 2) 테니스를 치러 가요 3) 골프를 치러 가요 4) 자전거를 타러 가요



## 활동 ກິດຈະກຳ

〈보기〉처럼 친구들의 취미를 조사해 보세요.
ຈົ່ງສອບຖາມກ່ຽວກັບກິດຈະກຳໃນເວລາຫວ່າງຂອງໝູ່ເພື່ອນລອງເບິ່ງ.

보기 ຕົວຢ່າງ

가: 리한 씨는 취미가 뭐예요? ຣີຮັນ ກິດຈະກຳໃນເວລາຫວ່າງ ຂອງເຈົ້າແມ່ນຫຍັງ?
나: 제 취미는 요리예요. ກິດຈະກຳໃນເວລາຫວ່າງຂອງຂ້ອຍ ແມ່ນການແຕ່ງກິນ.
가: 언제 요리해요? ເຈົ້າແຕ່ງກິນ ເມື່ອໃດ?
나: 시간이 있을 때 가끔 요리해요. ເມື່ອມີເວລາ ບາງຄັ້ງຄາວ ກໍແຕ່ງກິນ.

| | 이름 ຊື່ | 취미 ກິດຈະກຳໃນເວລາຫວ່າງ | 언제 ເມື່ອໃດ |
|---|---|---|---|
| 보기 ຕົວຢ່າງ | 리한 | 요리<br>ແຕ່ງກິນ | 시간 있을 때 가끔<br>ເມື່ອມີເວລາ ບາງຄັ້ງຄາວ |
| 1) | 투안 | 등산<br>ໄຕ່ພູ | 기분이 안 좋을 때<br>ເມື່ອອາລົມບໍ່ດີ |
| 2) | | | |
| 3) | | | |
| 4) | | | |
| 5) | | | |



### 퀴즈 ຄຳທວາຍ

✚ 다음 문장을 보고 생각나는 운동을 이야기해 보세요.
ຕໍ່ໄປ ຈົ່ງເບິ່ງປະໂຫຍກ ແລະ ເວົ້າກ່ຽວກັບກິດຈະກຳໃດໜຶ່ງທີ່ຄິດອອກ.

- 공으로 하는 운동이에요. ມັນເປັນການອອກກຳລັງກາຍໂດຍໃຊ້ໝາກບານ.
- 공에 날개가 있어요. ໝາກບານດັ່ງກ່າວມີປີກ.
- 두 사람 이상 할 수 있어요. ກິດຈະກຳດັ່ງກ່າວ ແມ່ນສາມາດຫຼິ້ນໄດ້ສອງຄົນຂຶ້ນໄປ.

정답 배드민턴

# 취미 활동 프로그램

ໂຄງການກິດຈະກຳໃນເວລາຫວ່າງ

각 지역의 복지관, 외국인근로자센터, 외국인력지원센터, 다문화지원센터 등에서는 외국인들의 즐거운 한국생활을 위해 다양한 교육 프로그램을 지원하고 있습니다. 한국어교육, 컴퓨터, 태권도 프로그램을 통하여 취미 활동을 즐길 수 있습니다.

ຢູ່ສູນຊ່ວຍເຫຼືອຊຸມຊົນ, ສູນແຮງງານແຮງງານຕ່າງດ້າວ, ສູນຊ່ວຍເຫຼືອຊາວຜູ້ອອກແຮງງານຕ່າງປະເທດ, ສູນວັດທະນາທຳນາໆຊາດຂອງແຕ່ລະເຂດ ເພື່ອໃຫ້ຄົນຕ່າງປະເທດສາມາດດຳລົງຊີວິດໄດ້ຢ່າງມີ ຄວາມສຸກໄດ້ມີຫຼາກຫຼາຍໂຄງການກິດຈະກຳ ແລະ ການເຝິກອົບຮົມສຳລັບຄົນຕ່າງປະເທດໄດ້ເຂົ້າຮ່ວມ ເຊັ່ນ: ໂຄງການເຝິກອົບຮົມພາສາເກົາຫຼີ, ຄອມພິວເຕີ, ເທຄອນໂດ.




한국어 수업
ຫ້ອງຮຽນພາສາເກົາຫຼີ



컴퓨터 수업
ຫ້ອງຮຽນຄອມພິວເຕີ




태권도 수업
ຫ້ອງຮຽນເທຄອນໂດ



요리 수업
ຫ້ອງຮຽນແຕ່ງກິນ



## EPS-TOPIK 듣기 ພາກຟັງ EPS-TOPIK



ສຳລັບຂໍ້ 1 ແລະ 2 ເປັນການເບິ່ງຮູບພາບ ແລະ ເລືອກເອົາຄຳສັບທີ່ຖືກຕ້ອງກັບຮູບ. ຈົ່ງຕັ້ງໃຈຟັງ ແລະ ເລືອກເອົາຄຳສັບທີ່ຖືກຕ້ອງ.



[1~2] 다음 그림을 보고 알맞은 것을 고르십시오.

ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

Track 54

1. ① ② ③ ④

2. ① ② ③ ④



ຕໍ່ໄປນີ້ ເປັນການຟັງຄຳຖາມ ແລະ ເລືອກເອົາຄຳຕອບທີ່ເໝາະສົມ. ກ່ອນຈະຟັງຄຳຖາມ ຈົ່ງກວດເບິ່ງເນື້ອໃນຂອງຄຳຕອບອີກຄັ້ງໜຶ່ງສາກ່ອນ.

[3~5] 질문을 듣고 알맞은 대답을 고르십시오.

ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

3. ① 독서예요. ② 독서할래요.
③ 독서 안 해요. ④ 독서하고 싶어요.

4. ① 낚시하러 가요. ② 제 취미는 낚시예요.
③ 친구하고 같이 해요. ④ 시간이 있을 때 해요.

5. ① 일요일에 해요. ② 테니스 치러 가요.
③ 내일이 주말이에요. ④ 음악을 들을 때 기분이 좋아요.



## 듣기 대본 ເນື້ອໃນບົດຟັງ

1. ① 여: 독서 ອ່ານໜັງສື　② 여: 낚시 ຕຶກເບັດ
   ③ 여: 여행 ທ່ອງທ່ຽວ　④ 여: 등산 ໄຕ່ພູ
2. ① 남: 축구 ກິລາບານເຕະ　② 남: 농구 ກິລາບານບ້ວງ
   ③ 남: 야구 ກິລາເບດສ໌ບໍ　④ 남: 수영 ລອຍນ້ຳ
3. 여: 취미가 뭐예요? ກິດຈະກຳໃນເວລາຫວ່າງຂອງເຈົ້າ ແມ່ນຫຍັງ?
4. 남: 주로 언제 낚시를 해요? ຊ່ວງໃດ ເຈົ້າໄປໄປຕຶກເບັດເລື້ອຍໆ?
5. 여: 주말에 보통 뭐 해요? ປົກກະຕິແລ້ວ ວັນທ້າຍອາທິດ ເຈົ້າເຮັດຫຍັງ?

정답 1. ② 2. ③ 3. ① 4. ④ 5. ②

## 확장 연습 ບົດເຝິກຫັດເພີ່ມເຕີມ　L-16

1. 이 사람은 무엇을 하고 있습니까? ບຸກຄົນນີ້ ກຳລັງເຮັດຫຍັງບໍ?



① ② ③ ④

2. 대화를 듣고 질문에 알맞은 것을 고르십시오.
   ຈົ່ງຟັງບົດສົນທະນາ ແລະ ເລືອກເອົາຄຳຕອບ ທີ່ຖືກຕ້ອງກັບຄຳຖາມ.

   여자는 이번 주말에 무엇을 하겠습니까? ແມ່ຍິງຄົນນັ້ນ ໃນທ້າຍອາທິດນີ້ ຈະເຮັດຫຍັງບໍ?

   ① 기타를 배울 겁니다.　② 한국어를 가르쳐 줄 겁니다.
   ③ 일이 많아서 출근을 할 겁니다.　④ 휴게실에서 텔레비전을 볼 겁니다.

## 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. ① 남: 요리를 배워요. ຮຽນແຕ່ງກິນ.　② 남: 컴퓨터를 배워요. ຮຽນຄອມພິວເຕີ.
   ③ 남: 태권도를 배워요. ຮຽນເທຄວັນໂດ.　④ 남: 한국어를 배워요. ຮຽນພາສາເກົາຫຼີ.
2. 여: 건우 씨, 요즘도 바빠요? ທ່ານ ກອນອູ, ດຽວນີ້ ຄາວຽກບໍ?
   남: 어제까지 일이 많아서 좀 바빴어요. ມາຮອດມື້ວານ ວຽກຫຼາຍ ຂ້ອນຄ້າງ ຄາວຽກ.
   오늘부터 다음 주말까지는 별로 바쁘지 않아요. ນັບແຕ່ມື້ນີ້ໄປ ຮອດທ້າຍອາທິດໜ້າ ຫວ່າງບໍ່ຄາວຽກຫຍັງ.
   여: 그래요? 제가 기타를 배워 보려고 하는데 혹시 좀 가르쳐 줄 수 있어요?
   ແມ່ນບໍ? ຂ້ອຍຢາກຮຽນຫຼິ້ນກີຕາ ບາງທີ ເຈົ້າສາມາດສອນຂ້ອຍໄດ້ບໍ?
   남: 그럼요. 주말에 휴게실에서 만나요. 제가 가르쳐 드릴게요.
   ຖ້າແນວນັ້ນ, ທ້າຍອາທິດ ໄປພົບກັນຢູ່ຫ້ອງໂຖງເດີ. ຂ້ອຍຊິສອນໃຫ້.

정답 1. ② 2. ①



# EPS-TOPIK 읽기 ພາກອ່ານ EPS-TOPIK



ສໍາລັບ 1 ແລະ 2 ແມ່ນເປັນຄໍາຖາມກ່ຽວກັບ ການເບິ່ງຮູບພາບ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.
ຈົ່ງເລືອກເອົາປະໂຫຍກທີ່ເໝາະສົມກັບຮູບພາບ.

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1. 

① 피아노를 쳐요. ② 음악을 들어요.
③ 사진을 찍어요. ④ 외국어를 배워요.

2. 

① 축구해요. ② 수영해요.
③ 테니스를 쳐요. ④ 자전거를 타요.



ຕໍ່ໄປເປັນການອ່ານປະໂຫຍກ ຫຼື ບົດສົນທະນາ ແລ້ວເລືອກເອົາສໍານວນທີ່ຖືກຕ້ອງຕື່ມໃສ່ບ່ອນຫວ່າງ.
ຈົ່ງຄິດທົບທວນກ່ຽວກັບສິ່ງທີ່ໄດ້ຮຽນມາ ເພື່ອແກ້ບັນຫາເຫຼົ່ານີ້.

[3~5] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄໍາຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3. 제 취미는 낚시예요. 저는 낚시가 정말 ________. 그래서 시간이 있을 때 항상 낚시를 하러 가요.
ກິດຈະກໍາໃນເວລາຫວ່າງຂອງຂ້ອຍ ແມ່ນຕຶກເບັດ. ຂ້ອຍມັກການຕຶກເບັດຫຼາຍ. ສະນັ້ນ ເມື່ອໃດມີເວລາ ຈະໄປຕຶກເບັດສະເໝີ.

① 슬퍼요 ② 좋아요 ③ 맛있어요 ④ 재미없어요

4. 가: ________?
나: 전 주로 자전거를 타러 가요. ຂ້ອຍໄປຂີ່ລົດຖີບເລື້ອຍໆ.

① 왜 자전거를 타요 ② 주말에 보통 뭐 해요
③ 누구하고 자전거를 타요 ④ 이번 주말에 시간 있어요

5. 가: 무슨 ________을 좋아해요? ເຈົ້າມັກການອອກກໍາລັງກາຍປະເພດໃດ?
나: 전 축구를 좋아해요. ຂ້ອຍມັກຫຼິ້ນກິລາບານເຕະ.

① 음식 ② 계절 ③ 요일 ④ 운동

정답 1. ③ 2. ④ 3. ② 4. ② 5. ④



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 다음 그림을 보고 맞는 문장을 고르십시오. ຕໍ່ໄປ ຈົ່ງເບິ່ງຮູບ ແລ້ວເລືອກເອົາຄໍາສັບທີ່ຖືກຕ້ອງ.

1.



① 골프　　② 농구
③ 수영　　④ 축구

2.



① 스키　　② 테니스
③ 배드민턴　　④ 스케이트

[3~4] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາ ຄໍາຕອບທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.

제 취미는 등산입니다. 주말이면 자주 가까운 산으로 등산을 ______ 갑니다.
ຖ້າແມ່ນທ້າຍອາທິດ ຂ້ອຍຈະໄປໄຕ່ພູບໍລິເວນໃກ້ໆຢູ່ເລື້ອຍໆ.

① 하고　　② 하러　　③ 하면　　④ 해서

4.

저는 한국에 ________ 비행기를 탈 겁니다. 처음이라서 조금 무섭지만 재미있을 것 같습니다.
ຕອນໄປເກົາຫຼີ ຂ້ອຍຈະຂີ່ເຮືອບິນໄປ. ຍ້ອນເປັນເທື່ອທໍາອິດ ຂ້ອນຂ້າງເປັນຕາຢ້ານ ແຕ່ຄືຊິໜ້າສົນໃຈດີ.

① 가고　　② 가러　　③ 갈 때　　④ 간 후

정답 1. ① 2. ④ 3. ② 4. ③



### 발음 ການອອກສຽງ P-05

**ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.**

ໃນການອອກສຽງພາສາເກົາຫຼີ ພະຍັນຊະນະດ່ຽວເຊັ່ນ ‘ㄹ’ ແມ່ນຈະອອກສຽງເປັນ [r] ແລ້ວຕາມດ້ວຍສຽງ [l] ຕາມ.

(1) 다리, 우리, 노래, 소리
(2) 달, 말, 쌀, 솔, 하늘



# 휴가 때 제주도에 다녀올 거예요
ຊ່ວງວັນພັກ ຂ້ອຍຈະໄປເກາະເຈຈູ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ເວົ້າກ່ຽວກັບປະສົບການ ແລະ ແຜນການທ່ອງທ່ຽວ |
| □ ໄວຍາກອນ | -아/어 보다, -(으)ㄹ 거예요 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ສະຖານທີ່ທ່ອງທ່ຽວ, ກິດຈະກຳ ແລະ ການກະກຽມການທ່ອງທ່ຽວ. |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ສະຖານທີ່ທ່ອງທ່ຽວຂອງເກົາຫຼີ |



## 대화 1 ບົດສົນທະນາ 1






ຕໍ່ໄປນີ້ເປັນບົດສົນທະນາລະຫວ່າງ ຣີຮັນ ແລະ ຕວນ. ພວກເຂົາຈະລົມກັນກ່ຽວກັບປະສົບການທ່ອງທ່ຽວຂອງພວກເຂົາ. ກ່ອນອື່ນຈົ່ງຟັງກ່ອນ 2 ຄັ້ງ ແລ້ວເວົ້າຕາມ.

투안 리한 씨는 제주도에 가 봤어요?
ຣີຮັນ ເຈົ້າເຄີຍໄປເກາະເຈຈູແລ້ວບໍ?

리한 네, 가 봤어요.
ເຈົ້າ, ເຄີຍໄປແລ້ວ.

투안 제주도가 어땠어요? 좋았어요?
ເກາະເຈຈູ ເປັນແນວໃດ? ເຈົ້າມັກບໍ?

리한 네, 정말 좋았어요.
ເຈົ້າ, ຂ້ອຍມັກຫຼາຍ.
특히 바다가 너무 아름다웠어요.
ໂດຍສະເພາະ ຫາດຊາຍແຄມທະເລ ແມ່ນງາມຫຼາຍ.

투안 그래요? 저도 제주도에 가 보고 싶어요.
ແມ່ນແທ້ບໍ? ຂ້ອຍກໍຢາກໄປເບິ່ງ ເກາະເຈຈູຄືກັນ.

> **특히** ໂດຍສະເພາະ
> ທຽບໃສ່ອັນອື່ນ ແມ່ນໂດດເດັ່ນກວ່າ
> - 저는 운동을 좋아해요. 특히 축구를 좋아해요.
>   ຂ້ອຍ ມັກຫຼິ້ນກິລາ. ໂດຍສະເພາະແມ່ນກິລາບານເຕະ.
> - 한국 음식은 아주 맛있어요. 특히 비빔밥이 맛있어요.
>   ອາຫານເກົາຫຼີ ແມ່ນແຊບຫຼາຍ. ໂດຍສະເພາະແມ່ນ ບີບິມບັບ ແມ່ນແຊບຫຼາຍ.

> **어땠어요?** ເປັນແນວໃດ?
> ໃຊ້ສຳລັບຖາມ ຄວາມເຫັນ ຫຼື ທັດສະນະ ກ່ຽວກັບປະສົບການທີ່ຄູ່ຮ່ວມສົນທະນາໄດ້ຜ່ານມາແລ້ວ.
> - 가: 어제 구경한 집은 어땠어요?
>   ມື້ວານ ໄປເບິ່ງເຮືອນເປັນແນວໃດ?
>   나: 깨끗하고 좋았어요. 그런데 월세가 좀 비쌌어요.
>   ເຮືອນກໍສະອາດ ແລະ ດີສົມຄວນ. ແຕ່ຄ່າເຊົ່າ ຂ້ອນຂ້າງແພງ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 리한 씨는 어디에 가 봤어요? ຣີຮັນ ເຄີຍໄປໃສມາແລ້ວ?
2. 제주도가 어때요? ເກາະເຈຈູ ເປັນແນວໃດ?

정답 1. 제주도에 가 봤어요. 2. 바다가 너무 아름다웠어요.





## 어휘 1 ຄຳສັບ 1　　여행지 ສະຖານທີ່ທ່ອງທ່ຽວ



ຕໍ່ໄປ ແມ່ນບັນດາຄຳສັບ ແລະ ສຳນວນກ່ຽວກັບສະຖານທີ່ທ່ອງທ່ຽວ ແລະ ກິດຈະກຳທີ່ກ່ຽວຂ້ອງ. ພວກເຮົາລອງໄປເບິ່ງນຳກັນວ່າ ມີຫຍັງແດ່?


산
ພູ


동굴
ຖ້ຳ


폭포
ນ້ຳຕົກຕາດ


호수
ທະເລສາບ


강
ແມ່ນ້ຳ


바다
ຫາດຊາຍ


섬
ເກາະ



온천
ບໍ່ນ້ຳອຸ່ນ


유적지
ສະຖານທີ່ປະຫວັດສາດ


민속촌
ບ້ານຊົນເຜົ່າ


놀이공원
ສວນສະໜຸກ


드라마 촬영지
ສະຖານ ທີ່ຖ່າຍລະຄອນ


아름답다
ງາມ


유명하다
ມີຊື່ສຽງ


경치가 좋다
ທິວທັດງາມ


사람들이 친절하다
ຄົນສ່ວນຫຼາຍໃຈດີ



ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

1. 그림에 맞는 표현을 〈보기〉에서 골라 넣으세요.

ຈົ່ງເລືອກເອົາສຳນວນ ຫຼື ຄຳສັບທີ່ຖືກຕ້ອງກັບຮູບພາບຈາກ < ກອບ > ແລ້ວຕື່ມໃສ່ບ່ອນຫວ່າງ.


1)


2)


3)


4)

보기
- 아름답다
- 유명하다
- 경치가 좋다
- 사람들이 친절하다

정답 1) 사람들이 친절하다 2) 아름답다 3) 유명하다 4) 경치가 좋다



## 문법 1 ໄວຍາກອນ 1 -아/어 보다

G17-1

'-아/어 보다' ມັນຖືກໃຊ້ຕື່ມທ້າຍຄໍາກໍາມະ ເພື່ອຊີ້ບອກເຖິງປະສົບການ ຫຼື ການລອງເຮັດລອງກະທໍາສິ່ງໃດສິ່ງໜຶ່ງ. ກໍລະນີເຮົາໃຊ້ກັບການລອງເຮັດລອງກະທໍາສິ່ງໃດໜຶ່ງນັ້ນ ເຮົາໃຊ້ '-아/어 봐요' ຫຼື '-아/어 보세요' ມີຄວາມໝາຍວ່າ 'ລອງ-ເບິ່ງ', ໃນກໍລະນີຊີ້ບອກເຖິງປະສົບການນັ້ນ ເຮົາໃຊ້ '-아/어 봤다' ມີຄວາມໝາຍວ່າ 'ເຄີຍ'. ຄໍາກໍາມະທີ່ນໍາມາໃຊ້ກັບໄວຍາກອນ '-아/어 봐요' ນີ້ ຈະບໍ່ໃຊ້ກັບຄໍາກໍາມະ '보다'.

| ㅏ, ㅗ → **-아 보다** | ຈໍາພວກສະຫຼະ ㅓ, ㅜ, ㅣ → **-어 보다** | 하다 → **해 보다** |
|---|---|---|
| 가다 → **가 보다**<br>앉다 → 앉**아 보다** | 먹다 → 먹**어 보다**<br>읽다 → 읽**어 보다** | 공부하다 → 공부**해 보다**<br>운동하다 → 운동**해 보다** |

- 이 옷을 **입어 보세요**. ລອງນຸ່ງເສື້ອໂຕນີ້ເບິ່ງ.
- 가: 제주도에 **가 봤어요**? ເຈົ້າເຄີຍໄປເກາະເຈຈູແລ້ວບໍ?
  나: 네, **가 봤어요**. 노이 씨도 한번 **가 보세요**. ເຈົ້າ, ຂ້ອຍເຄີຍໄປແລ້ວ. ນ້ອຍກໍລອງໄປເບິ່ງ.
- 한국에 있을 때 여행을 많이 **해 보고 싶어요**. ຕອນຢູ່ເກົາຫຼີ, ຂ້ອຍຢາກລອງໄປທ່ຽວຫຼາຍໆບ່ອນ.



### 대조적 정보 ການປຽບທຽບ

'-아/어 보다' ມັນຖືກໃຊ້ຕື່ມທ້າຍຄໍາກໍາມະ ເພື່ອຊີ້ບອກເຖິງປະສົບການ ຫຼື ການລອງເຮັດລອງກະທໍາສິ່ງໃດໜຶ່ງ. ກໍລະນີເຮົາໃຊ້ກັບການລອງກະທໍາສິ່ງໃດໜຶ່ງນັ້ນເຮົາໃຊ້ '-아/어 봐요'ຫຼື '-아/어 보세요' ມີຄວາມໝາຍວ່າ 'ເຄີຍ', 'ລອງ - ເບິ່ງ'. ໃນພາສາລາວ 'ເຄີຍ' ໃຊ້ເປັນຄໍາຊ່ວຍມັນຖືກໃຊ້ຢູ່ທາງໜ້າ ຂອງຄໍາກໍາມະ ແຕ່ພາສາເກົາຫຼີ '-아/어 보다' ແມ່ນຖືກຕື່ມໃສ່ຫຼັງຄໍາກໍາມະ. ແຕ່ 'ລອງ - ເບິ່ງ' ແມ່ນຕື່ມຄໍາກໍາມະໃສ່ທາງຫຼັງຂອງ 'ລອງ'.

- 한국음식을 **먹어 보세요**. ລອງກິນອາຫານເກົາຫຼີເບິ່ງ.
- 서울 타워에 **가 보세요**. ລອງໄປທ່ຽວຫໍຄອຍເຊອູນເບິ່ງ.



ເຂົ້າໃຈການໃຊ້ '-아/어 보다' ແລ້ວບໍ? ສະນັ້ນ ຈົ່ງລອງຕື່ມໃສ່ປະໂຫຍກຕໍ່ໄປນີ້ໃຫ້ຄົບຖ້ວນ ຄືດັ່ງຕົວ ຢ່າງ.

**2. 그림을 보고 〈보기〉처럼 '-아/어 보다'를 사용해서 문장을 완성하세요.**

ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ໂດຍນໍາໃຊ້ໄວຍາກອນ '-아/어 보다' ຄືດັ່ງຕົວຢ່າງ.

보기



제주도에 가 봤어요. ເຄີຍໄປ ເກາະເຈຈູແລ້ວ.

1)  바다에서 ________________.

2)  불고기를 ________________.

3)  한복을 ________________.

4)  김치를 ________________.

정답 1) 수영해 봤어요 2) 먹어 봤어요 3) 입어 봤어요 4) 담가 봤어요

## 대화 2 ບົດສົນທະນາ 2

Track 56



ຕວນ ແລະ ຊຸຣູ ກຳລັງລົມກັນກ່ຽວກັບ ແຜນການໃນວັນພັກ. ເຈົ້າສາມາດເດົາໄດ້ບໍ່ວ່າແຜນກ່ຽວກັບຫຍັງ? ຈົ່ງຟັງສອງຄັ້ງກ່ອນ ແລ້ວເວົ້າຕາມບົດສົນທະນານັ້ນ.

투안　수루 씨, 이번 휴가 때 뭐 할 거예요?
ຊຸຣູ, ຊ່ວງວັນພັກນີ້ ຈະເຮັດຫຍັງ?

수루　친구하고 설악산에 갈 거예요.
ຈະໄປ ພູຊໍຣັກຊັນ ກັບໝູ່.

투안 씨는 뭐 할 거예요?
ຕວນເດ ຈະເຮັດຫຍັງ?

투안　저는 제주도에 다녀올 거예요.
ຂ້ອຍຈະໄປເກາະເຈຈູ.

수루　비행기 표는 샀어요?
ຊື້ປີ້ຍົນແລ້ວບໍ?

투안　네, 숙소도 벌써 다 예약했어요.
ເຈົ້າ, ທີ່ພັກກໍຈອງໄວ້ແລ້ວ.

**이번 (지난/다음)**
ນີ້ (ຜ່ານມາ/ໜ້າ)

ໃຊ້ສຳລັບຄຳນາມກ່ຽວກັບເວລາ ໂດຍໃສ່ທາງໜ້າຂອງຄຳນາມທີ່ກ່ຽວກັບເວລານັ້ນ.

- 이번 주말에 테니스를 치러 가요.
  ທ້າຍອາທິດນີ້ ຈະຫຼິ້ນກິລາເທັນນິດສ໌.
- 지난해에 한국에 왔어요.
  ປີຜ່ານມາ ໄດ້ມາເກົາຫຼີແລ້ວ.
- 다음 휴가에는 제주도에 갈 거예요.
  ຊ່ວງພັກແລ້ງໜ້າ ຈະໄປເກາະເຈຈູ.

**때** ເມື່ອ, ຊ່ວງ, ຕອນ

ໃຊ້ຕາມຫຼັງຄຳນາມ ທີ່ກ່າວເຖິງຊ່ວງໄລຍະໃດໜຶ່ງ.

- 오늘 점심 때 뭐 먹었어요?
  ມື້ນີ້ ຊ່ວງເຂົ້າທ່ຽງ ກິນຫຍັງ?
- 방학 때 고향에 갈 거예요.
  ຊ່ວງພັກຮຽນ ຈະກັບບ້ານເກີດ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 수루 씨는 이번 휴가 때 뭐 할 거예요? ຊ່ວງວັນພັກນີ້ ຊຸຣູ ຈະເຮັດຫຍັງ?
2. 투안 씨는 휴가 때 어디에 갈 거예요? ຊ່ວງພັກ ຕວນ ຈະໄປໃສ?

정답　1. 설악산에 갈 거예요.　2. 제주도에 갈 거예요.

### Tip 숙소 ສະຖານທີ່ພັກ


호텔
ໂຮງແຮມ


콘도
ຄອນໂດ



여관
ເຮືອນພັກ



민박
ເຮືອນພັກ
(ຢູ່ຕາມເຮືອນຂອງປະຊາຊົນ)


펜션
ເຮືອນພັກຕາກອາກາດ


유스호스텔
ເຮືອນພັກຊາວໜຸ່ມ



## 어휘 2 ຄໍາສັບ 2 — 여행 준비와 활동 ກິດຈະກໍາ ແລະ ການກະກຽມການທ່ອງທ່ຽວ



ພວກເຮົາລອງມາເບິ່ງບັນດາສໍານວນ ແລະ ຄໍາສັບກ່ຽວກັບກິດຈະກໍາ ແລະ ການກະກຽມ ການທ່ອງທ່ຽວ ວ່າ ມີຫຍັງແດ່?




여행을 계획하다
ວາງແຜນການທ່ອງທ່ຽວ



여행을 준비하다
ກະກຽມການທ່ອງທ່ຽວ




표를 사다
ຊື້ ປີ້




숙소를 예약하다
ຈອງສະຖານທີ່ພັກ



짐을 싸다
ມ້ຽນເຄື່ອງຂອງ




출발하다
ອອກເດີນທາງ




도착하다
ເດີນທາງຮອດ



짐을 풀다
ຈັດມ້ຽນເຄື່ອງ



묵다
ຢູ່/ພັກ



박물관을 관람하다
ທ່ຽວຊົມຫໍພິພິດຕະພັນ




축제를 구경하다
ທ່ຽວຊົມງານບຸນ




기념품을 사다
ຊື້ເຄື່ອງທີ່ລະນຶກ



ຈົ່ງຄິດທົບທວນເຖິງຄໍາສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄໍາຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요.
ຈົ່ງເລືອກເອົາສໍານວນທີ່ຖືກຕ້ອງກັບຮູບພາບ.




1) 



2) 




3) 



4) 

**보기** 표를 사다　짐을 싸다　기념품을 사다　박물관을 관람하다

**정답** 1) 기념품을 사다　2) 박물관을 관람하다　3) 표를 사다　4) 짐을 싸다

## 문법 2 ໄວຍາກອນ 2 -(으)ㄹ 거예요




'-(으)ㄹ 거예요' ມັນຖືກໃຊ້ຕື່ມທ້າຍຄຳກຳມະ ເພື່ອຊີ້ບອກເຖິງແຜນການທີ່ຈະເຮັດໃນອະນາຄົດ, ມັນມີຄວາມໝາຍວ່າ 'ຈະ'.

| 자음(ພະຍັນຊະນະ) → **-을 거예요** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-ㄹ 거예요** |
| --- | --- |
| 읽다 → 읽을 **거예요** | 자다 → **잘 거예요**<br>알다 → **알 거예요** |

- 가: 오늘 저녁을 어디에서 **먹을 거예요?** ເຈົ້າຈະກິນເຂົ້າແລງຢູ່ໃສ?
  나: 집에서 **먹을 거예요**. ຂ້ອຍຈະກິນເຂົ້າຢູ່ເຮືອນ.
- 가: 이번 연휴에 뭐 **할 거예요**? ວັນພັກນີ້ ເຈົ້າຈະເຮັດຫຍັງ?
  나: 친구를 만나러 부산에 **갈 거예요**. ຂ້ອຍຈະໄປພົບໝູ່ຢູ່ບູຊານ.



ເຂົ້າໃຈການໃຊ້ '-(으)ㄹ 거예요' ແລ້ວບໍ? ສະນັ້ນ ຈົ່ງລອງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.

**2. 그림을 보고 〈보기〉처럼 '-(으)ㄹ 거예요'를 사용해서 대화를 완성하세요.**

ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ໂດຍການນຳໃຊ້ ໄວຍາກອນ '-(으)ㄹ 거예요' ຄືດັ່ງຕົວຢ່າງ.






가: 내일 뭐 할 거예요? ມື້ອື່ນ ຈະເຮັດຫຍັງ?
나: 집에서 <u>쉴 거예요</u>. ຈະພັກຜ່ອນຢູ່ເຮືອນ.

1) 

가: 내일 뭐 할 거예요?
나: 친구를 ______________________.

2) 


가: 주말에 뭐 할 거예요?
나: 부산에 ______________________.

3) 

가: 휴가 때 뭐 할 거예요?
나: 친구하고 같이 ______________________.

4) 


가: 휴가 때 뭐 할 거예요?
나: 제주도에 ______________________.

정답 1) 만날 거예요 2) 갈 거예요 3) 여행할 거예요 4) 갈 거예요



## 활동 ກິດຈະກຳ

〈보기〉처럼 친구와 이야기해 보세요. ຈົ່ງລອງສ້າງບົດສົນທະນາກັບໝູ່ເພື່ອນ ຄືດັ່ງຕົວຢ່າງ.

**보기 ຕົວຢ່າງ**

가: 리한 씨는 어디에 가 봤어요? ຣີຮັນ ເຄີຍໄປໃສມາແລ້ວ?
나: 제주도에 가 봤어요. ເຄີຍໄປເກາະ ເຈຈູມາແລ້ວ.
가: 어땠어요? ເປັນແນວໃດບໍ?
나: 경치가 정말 아름다웠어요. ທິວທັດ ແມ່ນງາມຫຼາຍ.

| | 이름 ຊື່ | 어디에 가 봤어요? ເຄີຍໄປໃສມາແລ້ວບໍ? | 어땠어요? ເປັນແນວໃດບໍ? |
|---|---|---|---|
| 보기 ຕົວຢ່າງ | 리한 | 제주도 ເກາະເຈຈູ | 경치가 정말 아름다웠어요. ທິວທັດ ແມ່ນງາມຫຼາຍ. |
| 1) | 투안 | 부산 ປູຊານ | 맛있는 음식이 많았어요. ອາຫານທີ່ແຊບ ມີຫຼາຍ. |
| 2) | | | |
| 3) | | | |
| 4) | | | |
| 5) | | | |



**퀴즈 ຄຳທວາຍ**

✚ 다음 단어를 보고 끝말잇기를 해 보세요.
ຈົ່ງເບິ່ງພະຍາງສຸດທ້າຍ ຂອງຄຳສັບຕໍ່ໄປນີ້ ແລະ ຕໍ່ດ້ວຍຄຳສັບທີ່ເລີ່ມຕົ້ນດ້ວຍພະຍາງນັ້ນ.

지도 ➡ 도시 ➡ 시(　　) ➡ (　　)

정답 계 → 계획



## 정보 ຂໍ້ມູນທົ່ວໄປ

# 한국의 관광지

ສະຖານທີ່ທ່ອງທ່ຽວຂອງເກົາຫຼີ



강원도
ແຂວງຄັງວອນ



속초
ຊົກໂຈ



강릉
ຄັງນຶງ



춘천
ຊຸນຊອນ




서울 시티투어
ທ່ຽວນະຄອນຫຼວງເຊອຸນ



63빌딩
ຕຶກ 63



한강 유람선
ລອງເຮືອແມ່ນໍ້າຮັນ



경복궁
ພະລາດຊະວັງ ຄຶຍອງບຸກ



경주
ຄຶຍອງຈຸ



불국사
ວັດບຸນກຸກຊາ




서해안
ທະເລຝັ່ງຕາເວັນຕົກ



대천 해수욕장
ຫາດຊາຍເທຊອນ



부산
ບຸຊານ



해운대
ຫາດຊາຍ ແຮອຸນເດ



제주도
ເກາະເຈຈຸ



한라산
ພູຮັນລາຊັນ

**알아 두세요! 외국인력지원센터의 단체 여행**

ເປັນແນວຄິດທີ່ດີ ທີ່ຮູ້ຈັກກັບສູນຂໍ້ມູນຂ່າວສານການທ່ອງທ່ຽວ ຂອງຜູ້ອອກແຮງງານຊາວຕ່າງປະເທດ

가까운 외국인지원센터나 외국인상담소의 여행 정보를 이용하면 저렴하고 재미있는 단체 여행 정보를 얻을 수 있습니다.

ທ່ານສາມາດສອບຖາມ ແລະ ຮັບຄຳປຶກສາກ່ຽວກັບຂໍ້ມູນການທ່ຽວທ່ຽວ ຈາກສູນສະໜັບສະໜູນຊ່ວຍເຫຼືອຄົນຕ່າງປະເທດທີ່ໃກ້ຄຽງໄດ້.



# EPS-TOPIK 듣기 ພາກຟັງ EPS-TOPIK



ສຳລັບຂໍ້ 1 ແລະ 2 ແມ່ນເປັນການເບິ່ງຮູບພາບ ແລ້ວເລືອກເອົາຄຳສັບ ທີ່ເໝາະສົມ. ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.



[1~2] 다음 그림을 보고 알맞은 것을 고르십시오.

ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

Track 57

1. ① ② ③ ④

2. ① ② ③ ④



ຕໍ່ໄປນີ້ ເປັນການຟັງຄຳຖາມ ແລະ ເລືອກເອົາຄຳຕອບທີ່ເໝາະສົມ. ກ່ອນຈະຟັງຄຳຖາມ ຈົ່ງກວດເບິ່ງເນື້ອໃນຂອງຄຳຕອບອີກຄັ້ງໜຶ່ງສາກ່ອນ.

[3~5] 질문을 듣고 알맞은 대답을 고르십시오.

ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

3. ① 네, 안 봤어요. ② 네, 가 봤어요.
③ 아니요, 보고 싶어요. ④ 아니요, 작년에 갔어요.

4. ① 작년에 갔어요. ② 많이 바빴어요.
③ 정말 아름다웠어요. ④ 친구하고 같이 갔어요.

5. ① 내일 할 거예요. ② 동생이 다녀올 거예요.
③ 제주도에 다녀올 거예요. ④ 시간이 있을 때 할 거예요.



### 듣기 대본 ເນື້ອໃນບົດຟັງ

1. ① 남: 산 ພູ　　② 남: 동굴 ຖ້ຳ
   ③ 남: 바다 ທະເລ　　④ 남: 민속촌 ບ້ານຊົນເຜົ່າ
2. ① 여: 독서 ການອ່ານ　　② 여: 여행 ທ່ອງທ່ຽວ
   ③ 여: 요리 ແຕ່ງກິນ　　④ 여: 낚시 ຕຶກເບັດ
3. 남: 제주도에 가 봤어요? ເຄີຍໄປ ເກາະເຈຈູແລ້ວ?
4. 여: 설악산이 어땠어요? ພູຊໍຣັກຊັນ ເປັນແນວໃດ?
5. 남: 휴가 때 뭐 할 거예요? ຊ່ວງວັນພັກ ຈະເຮັດຫຍັງ?

정답 1. ③ 2. ② 3. ② 4. ③ 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ



L-17

1. 여기는 어디입니까? ບ່ອນນີ້ ແມ່ນຢູ່ໃສ?



① ② ③ ④

2. 대화를 듣고 질문에 알맞은 것을 고르십시오.
   ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   여자는 오늘 무엇을 할 거예요? ແມ່ຍິງຄົນນັ້ນ ມື້ນີ້ ຈະເຮັດຫຍັງ?

   ① 휴가를 갈 거예요.　　② 제주도에 갈 거예요.
   ③ 숙소를 예약할 거예요.　　④ 비행기 표를 살 거예요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ.

1. 남: ① 동굴입니다. ນີ້ແມ່ນຖ້ຳ.　　② 온천입니다. ນີ້ແມ່ນບໍ່ນ້ຳອຸ່ນ.
   ③ 폭포입니다. ນີ້ແມ່ນນ້ຳຕົກຕາດ.　　④ 호수입니다. ນີ້ແມ່ນທະເລສາບ.
2. 남: 휴가 때 뭐 할 거예요? ຊ່ວງພັກແລ້ງ ເຈົ້າຈະເຮັດຫຍັງ?
   여: 제주도에 갈 거예요. ຂ້ອຍຈະໄປເກາະເຈຈູ.
   남: 숙소를 예약했어요? ເຈົ້າໄດ້ຈອງບ່ອນພັກແລ້ວບໍ?
   여: 아직 안 했어요. 오늘 저녁에 할 거예요. ຍັງບໍ່ທັນໄດ້ຈອງເທື່ອ. ມື້ນີ້ຕອນແລງຈະຈອງ.

정답 1. ④ 2. ③



## EPS-TOPIK 읽기 ພາກອ່ານ EPS-TOPIK



ສຳລັບ 1 ແລະ 2 ເປັນຄຳຖາມກ່ຽວກັບ ການເບິ່ງຮູບພາບ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.
ຈົ່ງເລືອກເອົາປະໂຫຍກທີ່ເໝາະສົມກັບຮູບພາບ.

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1.



① 약속이 있어요. ② 기분이 좋아요.
③ 경치가 좋아요. ④ 시간이 있어요.

2.



① 짐을 싸요. ② 짐이 같아요.
③ 짐이 없어요. ④ 짐을 안 봐요.



ຕໍ່ໄປເປັນການຕື່ມສຳນວນທີ່ເໝາະສົມ ໃສ່ບ່ອນຫວ່າງ ຂອງປະໂຫຍກ ຫຼື ບົດສົນທະນາ.ຈົ່ງຄິດທົບທວນ
ໃນສິ່ງທີ່ຮຽນຜ່ານມາ ແລະ ຕອບຄຳຖາມ.

[3~5] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.

저는 설악산에 안 가 봤어요. 설악산에 너무 가고 싶어요. 그래서 이번 휴가 때 ______________.
ຂ້ອຍຍັງບໍ່ເຄີຍໄປ ພູຊໍຣັກຊັນ, ຢາກໄປ ພູຊໍຣັກຫຼາຍ, ສະນັ້ນ ຊ່ວງພັກເທື່ອນີ້ ຈະໄປພູຊໍຣັກຊັນ.

① 집에서 쉴 거예요 ② 바다를 볼 거예요
③ 친구를 만날 거예요 ④ 설악산에 갈 거예요

4.

가: 이번 주말에 ____________ 할 거예요? ທ້າຍອາທິດນີ້ ເຈົ້າຈະເຮັດຫຍັງ?
나: 부산에 갈 거예요. ຂ້ອຍຈະໄປປູຊານ.

① 왜 ② 뭐 ③ 누가 ④ 언제

5.

저는 이번 휴가 때 제주도에 갈 거예요. 그래서 어제 비행기 표를 ____________. 오늘 숙소도 예약했어요.
ຊ່ວງພັກນີ້ ຂ້ອຍຈະໄປ ເກາະເຈຈູ. ສະນັ້ນ ມື້ນີ້ ກໍໄດ້ຈອງທີ່ພັກແລ້ວ.

① 샀어요 ② 풀었어요 ③ 출발했어요 ④ 참여했어요

정답 1. ③ 2. ① 3. ④ 4. ② 5. ①



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~4] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1\.

제 취미는 ________ 입니다. 지금까지 못 가 본 새로운 곳을 구경하고 그 지역의 음식을 먹어 보는 것을 좋아합니다.

ກິດຈະກຳໃນເວລາຫວ່າງຂອງຂ້ອຍ ແມ່ນການທ່ອງທ່ຽວ. ຂ້ອຍມັກທີ່ຈະທ່ຽວຊົມສະຖານທີ່ໃໝ່ໆ ທີ່ຍັງບໍ່ທັນໄດ້ໄປ ແລະ ລອງກິນອາຫານທີ່ຢູ່ໃນທ້ອງຖິ່ນນັ້ນ.

① 노래 ② 쇼핑 ③ 여행 ④ 운동

2\.

부산은 ________ 관광지입니다. 경치도 아름답고 맛있는 음식도 많아서 많은 사람들이 부산에 갑니다.

ປູຊານ ເປັນສະຖານທີ່ທ່ອງທ່ຽວທີ່ມີຊື່ສຽງ. ຍ້ອນວ່າ ທິວທັດກໍງາມ ແລະ ອາຫານທີ່ແຊບກໍມີຫຼາຍ ສະນັ້ນ ຄົນສ່ວນຫຼາຍຈຶ່ງໄປປູຊານ.

① 유명한 ② 신기한 ③ 위험한 ④ 비슷한

3\.

제 고향은 경치가 좋은 제주도입니다. 특히 바다가 깨끗하고 ________ 관광객이 많이 찾아옵니다.

ບ້ານເກີດຂອງຂ້ອຍ ແມ່ນມີທິວທັດງາມ ກໍຄືເກາະເຈຈູນັ້ນເອງ. ໂດຍສະເພາະ ແມ່ນທະເລ ແມ່ນສະອາດ ແລະ ງາມ ສະນັ້ນ ບັນດານັກທ່ອງທ່ຽວຈຳນວນຫຼາຍຈຶ່ງຄົ້ນຫາ ແລະ ມາທີ່ນີ້.

① 무거워서 ② 복잡해서 ③ 시끄러워서 ④ 아름다워서

4\.

저는 이번 휴가 때 제주도에 갈 계획입니다. 오늘 비행기 표를 ____________.

ໃນຊ່ວງພັກແລ້ງເທື່ອນີ້ ຂ້ອຍມີແຜນຈະໄປເກາະເຈຈູ. ມື້ນີ້ ຈະຈອງປີ້ຍົນ.

① 구경할 겁니다 ② 관람할 겁니다 ③ 예매할 겁니다 ④ 계획할 겁니다


정답 1. ③ 2. ① 3. ④ 4. ③




### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ໃນພາສາລາວຈະມີສຽງ ຊ ແລະ ສ, ພ, ຟ, ຜ ແລະ ຝ ທີ່ຄ້າຍຄືກັນ. ສຳລັບພາສາເກົາຫຼີ ສຽງທີ່ຖູ ບໍລິເວນປາຍແຂ້ວ 'ㅅ' ແລະ 'ㅆ' ອອກສຽງຄ້າຍຄືກັນ.

(1) 싸 : 사
(2) 싸다 : 사다
(3) 쌀 : 살
(4) 딸기를 사요.
(5) 유리가 싸요.



# 18 버스나 지하철을 타고 가요

ຂີ່ລົດເມ ຫຼື ລົດໄຟໃຕ້ດິນໄປ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການໂອ້ລົມກ່ຽວວິທີການຂີ່ນສິ່ງ ແລະ ເວລາທີ່ໃຊ້ |
| □ ໄວຍາກອນ | (이)나, 에서 까지 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ການຈໍລະຈອນ, ການເດີນທາງ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ວິທີການນຳໃຊ້ພະຫະນະການຂົນສົ່ງສາທາລະນະ |



## 대화 1 ບົດສົນທະນາ 1






ຕໍ່ໄປແມ່ນບົດສົນທະນາຂອງ ຕວນ ແລະ ມິນຊຸ. ທັງສອງຄົນແມ່ນກຳລັງສົນທະນາກ່ຽວກັບການເດີນທາງໄປສາລາກາງວ່າ ຈະໄປໄດ້ແນວໃດ. ກ່ອນອື່ນ, ຈົ່ງຟັງບົດສົນທະນາ 2 ຄັ້ງກ່ອນ ແລ້ວເວົ້າຕາມ.

투안 시청에 어떻게 가요?
ໄປສາລາກາງ ໄດ້ແນວໃດ?

민수 버스나 지하철을 타고 가세요.
ຂີ່ລົດເມ ຫຼື ລົດໄຟໃຕ້ດິນໄປ.

투안 뭐가 더 빨라요?
ອັນໃດໄວກວ່າກັນ?

민수 지금은 버스가 좀 더 빠를 거예요.
ຕອນນີ້ ແມ່ນລົດເມຈະໄວກວ່າໜ້ອຍໜຶ່ງ.

투안 몇 번 버스를 타고 가요?
ຂີ່ລົດເມເບີໃດໄປ?

민수 1번이나 2번 버스를 타고 가세요.
ຂີ່ລົດເມ ເບີ 1 ຫຼື ເບີ 2 ໄປກໍໄດ້.

> **더** ກວ່າ
>
> ມີປະລິມານ ຫຼື ຈຳນວນ ຫຼາຍກ່ວາສິ່ງໃດໜຶ່ງ.
>
> - 한국어를 더 잘하면 좋겠어요.
>   ຖ້າຂ້ອຍໄດ້ພາສາເກົາຫຼີຫຼາຍກ່ວານີ້ ກໍຈະດີ.
> - 가: 오늘 날씨가 추워요? 어제 날씨가 추워요?
>   ມື້ນີ້ອາກາດໜາວບໍ? ມື້ວານນີ້ ອາກາດ ໜາວບໍ?
>
>   나: 오늘 날씨가 더 추워요.
>   ມື້ນີ້ອາກາດ ແມ່ນໜາວຫຼາຍກ່ວາມື້ວານ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 투안 씨는 어디에 가려고 해요? ຕວນ ຈະໄປໃສ?
2. 투안 씨는 무엇을 타고 갈 거예요? ຕວນ ຈະຂີ່ຫຍັງໄປ?

정답 1. 시청에 가려고 해요. 2. 버스를 타고 갈 거예요.





## 어휘 1 ຄຳສັບ 1　교통 ການຂົນສົ່ງ



ແມ່ນຄຳສັບຫຼາຍຢ່າງທີ່ສະແດງເຖິງຮູບແບບການຂົນສົ່ງ. ລອງມາເບິ່ງນຳກັນວ່າ ມີຫຍັງແດ່?



마을버스
ລົດເມປະຈຳທາງໃນໝູ່ບ້ານ



시내버스
ລົດເມປະຈຳທາງໃນຕົວເມືອງ



시외/고속버스
ລົດເມຕ່າງແຂວງ/ລົດເມດ່ວນ



택시
ລົດແທັກຊີ



기차
ລົດໄຟ



KTX(고속열차)
KTX (ລົດໄຟຄວາມໄວສູງ)



지하철
ລົດໄຟໃຕ້ດິນ



비행기
ຍົນ, ເຮືອບິນ



배
ເຮືອ



버스 정류장
ປ້າຍລົດເມ



버스터미널
ສະຖານີລົດເມ



택시 승강장
ບ່ອນຈອດລົດແທັກຊີ້



기차역
ສະຖານີລົດໄຟ



지하철역
ສະຖານີລົດໄຟໃຕ້ດິນ



공항
ສະໜາມບິນ



여객터미널(선착장)
ອາຄານຜູ້ໂດຍສານ (ທ່າເຮືອ)



ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ

1. 사진에 맞는 표현을 〈보기〉에서 골라 넣으세요.

ຈົ່ງເລືອກສຳນວນຈາກ < ກອບ > ຕື່ມໃສ່ບ່ອນຫວ່າງທີ່ຖືກຕ້ອງກັບຮູບພາບ.



1)



2)



3)



4)



보기
배
버스
비행기
기차

정답 1) 버스　2) 기차　3) 배　4) 비행기

## 문법 1 ໄວຍາກອນ 1 (이)나




'(이)나' ມັນໃຊ້ຊີ້ບອກວ່າ ລະຫວ່າງຄຳນາມທັງສອງຄຳ ເຮົາຈະເລືອກເອົາອັນໃດກໍໄດ້, ມັນຖືກໃຊ້ຕື່ມທ້າຍຄຳນາມ. ມີຄວາມໝາຍວ່າ 'ຫຼື (ບໍ່ກໍ)'.

| 자음(ພະຍັນຊະນະ) → **이나** | 모음(ສະຫຼະ) → **나** |
|---|---|
| 수박 → 수박**이나** | 딸기 → 딸기**나** |

- 시원한 **음료수나** 물을 마시고 싶어요. ຂ້ອຍຢາກດື່ມນ້ຳ ຫຼື(ບໍ່ກໍ)ນ້ຳໝາກໄມ້ເຢັນໆ.
- 우리 **토요일이나** 일요일에 만나요. ພວກເຮົາພົບກັນວັນເສົາ ຫຼື(ບໍ່ກໍ)ວັນອາທິດ.



ເຂົ້າໃຈການໃຊ້ '(이)나' ແລ້ວບໍ? ສະນັ້ນ ຈົ່ງລອງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕໍ່ຢ່າງ.

**2. 그림을 보고 〈보기〉처럼 대화를 완성하세요.** ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.






가: 집에 어떻게 가요? ເຈົ້າຈະກັບບ້ານແນວໃດ?
나: 버스나 택시를 타고 가요. ຂີ່ລົດເມ ຫຼື ລົດແທັກຊີກັບ.

1)


가: 회사에 어떻게 가요?
나: ________________ 타고 가요.

2)


가: 제주도에 어떻게 가요?
나: ________________ 타고 가요.

3)


가: 아침에 보통 뭘 먹어요?
나: ________________ 먹어요.

4)

가: 주말에 보통 뭐 해요?
나: ________________ 해요.

정답 1) 지하철이나 버스를 2) 비행기나 배를 3) 빵이나 김밥을 4) 운동이나 쇼핑을

### 유용한 표현 ສຳນວນທີ່ສຳຄັນ

제가 낼게요. ຂ້ອຍຈະຈ່າຍເອງ. (ຂ້ອຍລ້ຽງເອງ)

가: 많이 드세요. **제가 낼게요.** ກິນຫຼາຍໆເດີ ມື້ນີ້ຂ້ອຍລ້ຽງເອງ.
나: 감사합니다. ຂອບໃຈ.

## 대화 2 ບົດສົນທະນາ 2

Track 59



ຕວນ ແລະ ຊູຣູ ກຳລັງສົນທະນາກ່ຽວກັບວິທີການໄປເຮັດວຽກ ແລະ ເວລາ. ພວກເຂົາ ກຳລັງສົນທະນາຫຍັງກັນ? ກ່ອນອື່ນແມ່ນ ຟັງບົດສົນທະນາສອງຄັ້ງ. ຫຼັງຈາກນັ້ນ ລອງສະແດງບົດບາດເປັນ ຕວນ ແລະ ຊູຣູ ແລ້ວເວົ້າຕາມບົດສົນທະນາ.

투안 수루 씨는 여기까지 어떻게 왔어요?
ຊູຣູ, ເຈົ້າມາຮອດບ່ອນນີ້ໄດ້ແນວໃດ?

수루 저는 회사가 가까워서 걸어왔어요.
ຍ້ອນບໍລິສັດຂອງຂ້ອຍຢູ່ໃກ້ ຂ້ອຍເລີຍຍ່າງມາ.

투안 씨는 어떻게 왔어요?
ຕວນເດ, ເຈົ້າມານີ້ ໄດ້ແນວໃດ?

투안 오늘은 버스를 타고 왔어요.
ມື້ນີ້ ຂ້ອຍຂີ່ລົດເມມາ.

수루 회사에서 여기까지 시간이 얼마나 걸려요?
ແຕ່ບ່ອນເຮັດວຽກ ມາຫາບ່ອນນີ້ແມ່ນໃຊ້ເວລາເທົ່າໃດ?

투안 보통 30분 정도 걸려요. 하지만 출퇴근 시간에는 차가 막혀서 시간이 좀 더 걸려요.
ປົກກະຕິແມ່ນໃຊ້ເວລາປະມານ 30ນາທີ. ແຕ່ວ່າ ເວລາເຂົ້າ-ເລີກການແມ່ນລົດຕິດ ເລີຍໃຊ້ເວລາຫຼາຍກວ່ານັ້ນໜ້ອຍໜຶ່ງ.

**걸리다** ໃຊ້ເວລາ

ຄວາມຕ້ອງການ ໃນການໃຊ້ເວລາ ຫຼື ວັນທີ ເພື່ອເຮັດສິ່ງໃດໜຶ່ງໃຫ້ສຳເລັດ.

- 집에서 회사까지 30분이 걸려요.
  ແຕ່ເຮືອນ ໄປຫາບໍລິສັດແມ່ນໃຊ້ເວລາ 30 ນາທີ.
- 이 일을 다 끝내려면 3일이 걸려요.
  ຖ້າຈະເຮັດວຽກນີ້ໃຫ້ແລ້ວໝົດ ແມ່ນໃຊ້ເວລາ 3 ມື້.

**막히다** ຕິດ, ແອອັດ

ທົ່ນທາງວັ່ນວາຍຫຼາຍ (ລົດຕິດ) ເຮັດໃຫ້ມາແລ້ວບໍ່ສາມາດໜີອອກໄປໄດ້.

- 출근 시간에는 길이 막히는 곳이 많아요.
  ໃນໂມງໄປການ, ມີຫຼາຍເສັ້ນທາງທີ່ລົດຕິດ.
- 교통사고가 나서 길이 많이 막혀요.
  ເກີດມີອຸບັດຕິເຫດໃນຖະໜົນຈຶ່ງເຮັດໃຫ້ລົດຕິດຫຼາຍ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 수루 씨는 회사에 어떻게 왔어요? ຊູຣູ ມາບໍລິສັດໄດ້ແນວໃດ?
2. 투안 씨는 무엇을 타고 왔어요? ຕວນ ຂີ່ຫຍັງມາ?

정답 1. 걸어왔어요. 2. 버스를 타고 왔어요.

**Tip 교통 상황** ສະພາບການສັນຈອນ


출근 시간
ໂມງເຂົ້າວຽກ


퇴근 시간
ໂມງເລີກວຽກ


출퇴근 시간
ໂມງເຂົ້າ-ເລີກວຽກ
(ຊົ່ວໂມງຮີບດ່ວນ)


차가 막히다
ລົດຕິດ



## 어휘 2 ຄຳສັບ 2　　이동 ການເດີນທາງ



ລອງມາເບິ່ງວ່າ ສຳນວນທີ່ໃຊ້ໃນເວລາເດີນທາງມີຫຍັງແດ່?



타다
ຂີ່




타고 가다
ຂີ່ໄປ




(버스를) 타고 오다
ຂີ່ (ລົດເມ) ມາ



걷다
ຍ່າງ




걸어가다
ຍ່າງໄປ




걸어오다
ຍ່າງມາ



내리다
ອອກ, ລົງ




갈아타다/환승하다
ຕໍ່/ປ່ຽນລົດ




지나다
ກາຍ, ຜ່ານໄປ



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요.

ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




보기　걷다　타다　내리다　지나다

정답 1) 타다　2) 내리다　3) 걷다　4) 지나다

# 문법 2 ໄວຍາກອນ 2 에서 까지




'에서 까지' ເຮົາໃຊ້ຕື່ມທ້າຍຄໍານາມສະຖານທີ່ເພື່ອຊີ້ບອກເຖິງຈຸດເລີ່ມຕົ້ນ ແລະ ຈຸດສິ້ນສຸດ. ມັນມີຄວາມໝາຍວ່າ 'ແຕ່-, ຫາ-'.

- 가: **집**에서 **회사**까지 어떻게 가요? ແຕ່ເຮືອນຫາບໍລິສັດ, ເຈົ້າໄປວຽກແນວໃດ? (ເຈົ້າຫຼວໄປບໍລິສັດຈັ່ງໃດ?)
  나: 저는 버스를 타고 가요. ຂ້ອຍຂີ່ລົດເມໄປ.
- 가: **여기**에서 **시청**까지 얼마나 걸려요? ແຕ່ນີ້ຫາຫ້ອງການປົກຄອງນະຄອນຫຼວງ ໃຊ້ເວລາເທົ່າໃດ?
  나: 30분쯤 걸려요. ໃຊ້ເວລາປະມານ 30 ນາທີ.



## 비교해 보세요 ຈົ່ງປຽບທຽບລອງເບິ່ງ

✓ ລະຫວ່າງ **'에서'** ທີ່ໃຊ້ຊີ້ບອກຈຸດເລີ່ມຕົ້ນກັບ **'에서'** ທີ່ໃຊ້ຊີ້ບອກສະຖານທີ່.

ໂດຍທົ່ວໄປແລ້ວ '에서' ເຮົາໃຊ້ຕື່ມທ້າຍຄໍານາມສະຖານທີ່ ທີ່ມີການກະທໍາໃດໜຶ່ງຢູ່ສະຖານທີ່ນັ້ນ. ແຕ່ວ່າ ຖ້າມີຄໍາກໍາມະທີ່ເຮັດໜ້າທີ່ເປັນຕົວສໍາແດງໃນປະໂຫຍກທີ່ຊີ້ບອກເຖິງການເຄື່ອນທີ່ຈໍາພວກຄໍາກໍາມະ '가다, 오다, 떠나다, 출발하다' ເປັນຕົ້ນ. ໃນກໍລະນີນີ້ '에서' ຈະເຮັດໜ້າທີ່ເປັນຕົວຊີ້ບອກຈຸດເລີ່ມຕົ້ນຂອງການກະທໍາ.

- 집**에서** 쉴 거예요. (ບອກສະຖານທີ່)
- 집**에서** 출발할 거예요. (ບອກຈຸດເລີ່ມຕົ້ນ)



ເຂົ້າໃຈການນໍາໃຊ້ '에서 까지' ແລ້ວບໍ? ສະນັ້ນ ຈົ່ງເບິ່ງຮູບພາບ ແລ້ວເຮັດໃຫ້ປະໂຫຍກຄົບຖ້ວນຄືດັ່ງຕົວຢ່າງ.

2. 그림을 보고 〈보기〉처럼 문장을 만들어 보세요. ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.




보기: 집에서 회사까지 걸어왔어요.
ຂ້ອຍຍ່າງມາ ແຕ່ເຮືອນຮອດຫ້ອງການ.

1) ______________ 걸어갔어요.

2) ______________ 버스를 타고 갔어요.

3) ______________ 택시를 타고 갈 거예요.

4) ______________ 택시를 타고 오세요.

정답 1) 집에서 시장까지 2) 회사에서 시청까지 3) 공항에서 호텔까지 4) 호텔에서 회사까지



## 활동 ກິດຈະກຳ

〈보기〉처럼 친구와 이야기해 보세요. ຈົ່ງລອງສ້າງບົດສົນທະນາກັບໝູ່ເພື່ອນ ຄືດັ່ງຕົວຢ່າງ.

보기 ຕົວຢ່າງ

가: 여기에서 집까지 어떻게 가요? ແຕ່ບ່ອນນີ້ ໄປຮອດເຮືອນ ແມ່ນໄປແນວໃດ?
나: 버스를 타고 가요. ຂີ່ລົດເມໄປ.
가: 시간이 얼마나 걸려요? ໃຊ້ເວລາເທົ່າໃດ?
나: 30분 정도 걸려요. ໃຊ້ເວລາປະມານ 30 ນາທີ.

| | 이름<br>ຊື່ | 교통수단<br>ວິທີ ຫຼື ຮູບແບບການຂົນສົ່ງ | 시간<br>ເວລາ |
|---|---|---|---|
| 보기 ຕົວຢ່າງ | 리한<br>ຣິຮັນ | 버스<br>ລົດເມ | 30 분<br>30 ນາທີ |
| 1) | 투안<br>ຕວນ | 자전거<br>ລົດຖີບ | 20 분<br>20 ນາທີ |
| 2) | 수루<br>ຊູຣູ | 지하철<br>ລົດໄຟໃຕ້ດິນ | 1 시간<br>1 ຊົ່ວໂມງ |
| 3) | | | |
| 4) | | | |
| 5) | | | |

### 유용한 표현 ສຳນວນທີ່ສຳຄັນ

속이 시원해요. ຮູ້ສຶກດີຂຶ້ນ (ໂລ່ງໃຈ).

가: 투이 씨, 이삿짐은 다 정리했어요? ຕວນ, ເຈົ້າ ກຽມເຄື່ອງທີ່ຈະຍ້າຍ ແລ້ວໝົດລະບໍ?
나: 네, 다 끝냈어요. 이제 **속이 시원해요**. ເຈົ້າ, ແລ້ວໝົດແລ້ວ. ຕອນນີ້ **ຮູ້ສຶກໂລ່ງໃຈ**.

# 대중교통 이용 방법

ວິທີໃຊ້ລະບົບການຂົນສົ່ງສາທາລະນະ

**교통비 결제** ການຈ່າຍຄ່າລົດ

교통비는 교통카드(T-money), 표, 현금으로 결제할 수 있습니다. 교통수단에 따라서 결제를 하는 방법이 다릅니다.

ການຈ່າຍຄ່າລົດແມ່ນສາມາດຈ່າຍໂດຍເງິນສົດ, ປີ້ ແລະ ບັດຂີ່ລົດ (T-money) ໄດ້. ວິທີການຈ່າຍຄ່າລົດ ແມ່ນແຕກຕ່າງກັນໄປຕາມແຕ່ລະປະເພດການຂົນສົ່ງ.



| | | | |
|---|---|---|---|
| 교통카드 ບັດຂີ່ລົດ | 버스 ລົດເມ | 지하철 ລົດໄຟໃຕ້ດິນ | 택시 ລົດແທັກຊີ |
| 표 ປີ້ (ປີ້ລົດ) | 시내/고속버스 ລົດເມປະຈຳທາງໃນເມືອງ/ລົດເມດ່ວນ | 비행기 ຍົນ/ເຮືອບິນ | 배 ເຮືອ |
| 현금 ເງິນສົດ | 버스 ລົດເມ | 택시 ລົດແທັກຊີ | |

**교통카드 구입과 충전** ການຊື້ ແລະ ການຕື່ມເງິນບັດຂີ່ລົດ



| | | | | |
|---|---|---|---|---|
| 교통카드 구입 ການຊື້ບັດຂີ່ລົດ | 지하철역이나 버스정류장 매점, 편의점에서 교통카드의 구입과 충전이 가능합니다. ສາມາດຊື້ ແລະ ຕື່ມເງິນບັດຂີ່ລົດໄດ້ຕາມສະຖານີລົດໄຟໃຕ້ດິນ, ຮ້ານຄ້າໃກ້ປ້າຍລົດເມ ແລະ ຮ້ານສະດວກຊື້ຕ່າງໆ. | | 매점 ຮ້ານຄ້າ | 편의점 ຮ້ານສະດວກຊື້ |
| 교통카드 충전 (지하철역) ການຕື່ມເງິນບັດຂີ່ລົດ (ສະຖານີລົດໄຟໃຕ້ດິນ) | 지하철역에서 교통카드 충전기를 찾으세요. ກະລຸນາຊອກຫາຕູ້ຕື່ມເງິນບັດຂີ່ລົດຢູ່ສະຖານີລົດໄຟໃຕ້ດິນ. | 교통카드를 올려 놓으세요. ວາງບັດຂີ່ລົດໃສ່. | 충전 금액을 선택하세요. ເລືອກຈຳນວນເງິນທີ່ຈະຕື່ມ. | 금액을 결제하세요. ຈ່າຍເງິນຕາມຈຳນວນທີ່ເລືອກ. |



## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ແລະ 2 ແມ່ນເປັນຄຳຖາມກ່ຽວກັບ ການເບິ່ງຮູບພາບ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ. ຈົ່ງຟັງໃຫ້ດີ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

[1~2] 다음 사진을 보고 알맞은 단어를 고르십시오.

ເບິ່ງຮູບພາບດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳສັບທີ່ຖືກຕ້ອງ.

Track 60

1. ① ② ③ ④

2. ① ② ③ ④



ຕໍ່ໄປນີ້ ເປັນການຟັງຄຳຖາມ ແລະ ເລືອກເອົາຄຳຕອບທີ່ເໝາະສົມ. ກ່ອນຈະຟັງຄຳຖາມ ຈົ່ງກວດເບິ່ງເນື້ອໃນຂອງຄຳຕອບອີກຄັ້ງໜຶ່ງສາກ່ອນ.

[3~5] 질문을 듣고 알맞은 대답을 고르십시오.

ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

3. ① 친구가 가요. ② 버스가 가요.
   ③ 버스를 타고 가요. ④ 친구를 만나러 가요.

4. ① 다음 주말에 해요. ② 보통 회사에서 해요.
   ③ 운동이나 쇼핑을 해요. ④ 토요일하고 일요일이에요.

5. ① 1시 30분이에요. ② 집에 6시에 가요.
   ③ 30분 정도 걸려요. ④ 1번이나 2번 버스를 타요.



### 듣기 대본 ເນື້ອໃນບົດຟັງ

1. ① 여: 교통 ການຂົນສົ່ງ　② 여: 버스 ລົດເມ
   ③ 여: 시청 ສາລາກາງ　④ 여: 택시 ລົດແທັກຊີ
2. ① 남: 지하철 ລົດໄຟໃຕ້ດິນ　② 남: 비행기 ຍົນ/ເຮືອບິນ
   ③ 남: 기차역 ສະຖານີລົດໄຟ　④ 남: 정류장 ປ້າຍລົດ
3. 여: 시청에 어떻게 가요? ໄປສາລາກາງແນວໃດ?
4. 남: 주말에 보통 뭐 해요? ປົກກະຕິເຈົ້າເຮັດຫຍັງ ໃນວັນທ້າຍອາທິດ?
5. 여: 집에서 회사까지 버스는 시간이 얼마나 걸려요?
   ຂີ່ລົດເມແຕ່ເຮືອນໄປຫາບໍລິສັດ ແມ່ນໃຊ້ເວລາເທົ່າໃດ?

정답 1. ④ 2. ② 3. ③ 4. ③ 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ　L-18

1. 잘 듣고 들은 내용과 관계있는 그림을 고르십시오.
   ຈົ່ງຟັງໃຫ້ດີ ແລ້ວເລືອກເອົາຮູບພາບ ທີ່ກ່ຽວຂ້ອງກັບເນື້ອໃນບົດຟັງນັ້ນ.

①


②



③



④


2. 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.
   ① 어제 왔어요.　② 처음 왔어요.
   ③ 버스로 왔어요.　④ 공항에서 왔어요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 집에 갈 때 버스를 타요? ເວລາເຈົ້າກັບບ້ານ, ເຈົ້າຂີ່ລົດເມບໍ?
   여: 아니요, 집이 가까워서 걸어서 가요. ບໍ່, ຍ້ອນບ້ານຂ້ອຍຢູ່ໃກ້ ຂ້ອຍເລີຍຍ່າງກັບບ້ານ.
2. 남: 여기까지 어떻게 왔어요? ເຈົ້າມາບ່ອນນີ້ໄດ້ແນວໃດ?

정답 1. ④ 2. ③



# EPS-TOPIK 읽기 ພາກອ່ານ EPS-TOPIK



ສຳລັບ 1 ແລະ 2 ແມ່ນເປັນຄຳຖາມກ່ຽວກັບການເບິ່ງຮູບພາບ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ. ຈົ່ງເລືອກເອົາປະໂຫຍກທີ່ເໝາະສົມກັບຮູບພາບ.

**[1~2] 다음 그림을 보고 맞는 문장을 고르십시오.** ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1. 

① 타요. ② 앉아요.
③ 걸어요. ④ 일어나요.

2. 


① 버스를 내렸어요. ② 버스를 지났어요.
③ 버스를 갈아탔어요. ④ 버스를 타고 왔어요.



ຕໍ່ໄປແມ່ນຄຳຖາມກ່ຽວກັບການ ອ່ານປະໂຫຍກ ຫຼື ບົດສົນທະນາ ແລ້ວເລືອກເອົາສຳນວນທີ່ຖືກຕ້ອງໃສ່ໃນບ່ອນຫວ່າງ. ລອງຄິດທົບທວນເຖິງສິ່ງທີ່ຮຽນມາ ແລ້ວຕອບຄຳຖາມ.

**[3~5] 빈칸에 들어갈 가장 알맞은 것을 고르십시오.**
ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.
가: 집에서 회사까지 ___________ 걸려요? ແຕ່ເຮືອນ ໄປຫາບໍລິສັດ ແມ່ນໃຊ້ເວລາເທົ່າໃດ?
나: 20분 정도 걸려요. ໃຊ້ເວລາປະມານ 20 ນາທີ.

① 왜 ② 언제 ③ 몇 개 ④ 얼마나

4.
가: 수루 씨는 여기까지 어떻게 왔어요? ຊູຣູ ມາບ່ອນນີ້ແນວໃດ?
나: 저는 회사가 가까워서 ___________. ຍ້ອນບໍລິສັດຂ້ອຍຢູ່ໃກ້ ຂ້ອຍເລີຍ ຍ່າງມາ.

① 안 왔어요 ② 걸어왔어요
③ 비행기를 탔어요 ④ 버스가 빠를 거예요

5.
저는 회사에 버스를 타고 가요. 버스는 보통 30분 정도 걸려요. 하지만 출퇴근 시간에는 차가 막혀서 _______________.

ຂ້ອຍຂີ່ລົດເມໄປບໍລິສັດ. ລົດເມປົກກະຕິແມ່ນໃຊ້ເວລາປະມານ 30 ນາທີ. ແຕ່ວ່າ ເວລາເຂົ້າ-ເລີກວຽກ ແມ່ນລົດຕິດ ເລີຍໃຊ້ເວລາຫຼາຍກວ່ານັ້ນໜ້ອຍໜຶ່ງ.

① 회사에 안 가요 ② 30분 정도 있어요
③ 시간이 좀 더 걸려요 ④ 버스에 사람이 많아요

정답 1. ③ 2. ④ 3. ④ 4. ② 5. ③



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1.



① 메뉴판　② 주문서
③ 교통카드　④ 비행기 표

2.



① 버스를 탑니다.　② 버스에서 내립니다.
③ 버스가 지나갑니다.　④ 버스로 갈아탑니다.

[3~4] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.

아침 _______ 시간에는 지하철을 이용하는 사람들이 많아서 지하철이 아주 복잡합니다. 그래서 저는 집에서 조금 일찍 출발합니다.

ໃນເວລາ ເຂົ້າວຽກ ຕອນເຊົ້າ, ຄົນໃຊ້ລົດໄຟຟ້າໃຕ້ດິນເປັນຈຳນວນຫຼາຍ ຈຶ່ງເຮັດໃຫ້ມີຄວາມສັບສົນຫຼາຍ. ສະນັ້ນ, ຂ້ອຍຈຶ່ງອອກຈາກບ້ານແຕ່ເຊົ້າໜ້ອຍໜຶ່ງ.

① 작업　② 출근　③ 회의　④ 휴식

4.

제가 사는 집 바로 앞에 지하철역이 있습니다. 가까운 곳에 버스 정류장도 있어서 _________이/가 아주 편리합니다.

ບ້ານທີ່ຂ້ອຍອາໃສຢູ່ ແມ່ນຖັດຈາກສະຖານີລົດໄຟຟ້າໃຕ້ດິນເລີຍ. ຢູ່ໃກ້ໆນັ້ນກໍມີປ້າຍລົດເມຢູ່ ຈຶ່ງຖືວ່າ ການຂົນສົ່ງສາ ທາລະນະແມ່ນສະດວກສະບາຍຫຼາຍ.

① 교통　② 쇼핑　③ 예약　④ 운전

5.

어젯밤부터 눈이 계속 내렸습니다. 길이 많이 ______ 것 같아서 일찍 집에서 나왔습니다.

ຫິມະສືບຕໍ່ຕົກລົງມາຢ່າງຕໍ່ເນື່ອງຕັ້ງແຕ່ຄືນວານນີ້. ເບິ່ງຄືວ່າ ລົດຈະຕິດຫຼາຍ, ຂ້ອຍຈຶ່ງອອກຈາກບ້ານແຕ່ເຊົ້າ.

① 막힐　② 지날　③ 도착할　④ 들어갈

6.

집에서 회사까지 가는 방법은 많습니다. 그 중에서 100번 버스를 타고 가다가 지하철로 _________ 것이 제일 빠릅니다.

ການເດີນທາງໄປບໍລິສັດແຕ່ເຮືອນຂອງຂ້ອຍແມ່ນມີຫຼາຍວິທີ. ໃນນັ້ນ ການໄປໂດຍຂີ່ລົດເມໝາຍເລກ 100 ແລ້ວ ປ່ຽນ/ຕໍ່ລົດໄຟໃຕ້ດິນ ແມ່ນເປັນວິທີທີ່ໄວທີ່ສຸດ.

① 건너가는　② 내려가는　③ 갈아타는　④ 들어오는

정답 1. ③ 2. ② 3. ② 4. ① 5. ① 6. ③



# 거기 한국가구지요?

## ນັ້ນແມ່ນ ເຄື່ອງເຟີນິເຈີຂອງເກົາຫຼີບໍ?

**학습 안내**
ຄໍາແນະນໍາ ໃນການຮຽນ

- □ ຈຸດປະສົງໃນການຮຽນ — ການໂທລະສັບ, ເວົ້າກ່ຽວກັບອິນເຕີເນັດ
- □ ໄວຍາກອນ — -지요, -고
- □ ຄໍາສັບ ແລະ ສໍານວນຄໍາເວົ້າ — ການໂທລະສັບ, ອິນເຕີເນັດ
- □ ຂໍ້ມູນກ່ຽວກັບວັດທະນາທໍາ — ເບີໂທລະສັບ ທີ່ເປັນປະໂຫຍດ ໃນການດໍາລົງຊີວິດ



## 대화 1 ບົດສົນທະນາ 1






ຕໍ່ໄປ ເປັນບົດສົນທະນາການລົມໂທລະສັບລະຫວ່າງ ຕວນ ແລະ ພະນັກງານໂຮງງານ ເຟີນິເຈີ. ກ່ອນອື່ນ ຈົ່ງຟັງບົດສົນທະນາ 2 ຄັ້ງແລ້ວເວົ້າຕາມ.

투안 여보세요. 거기 한국가구지요?
ສະບາຍດີ. ນີ້ແມ່ນຮ້ານເຟີນິເຈີ ເກົາຫຼີບໍ?

여자 네, 맞습니다.
ເຈົ້າ, ແມ່ນແລ້ວ.

투안 안녕하세요? 저는 투안입니다.
ສະບາຍດີ. ຂ້ອຍຊື່ວ່າ ຕວນ.
김수미 과장님 좀 바꿔 주세요.
ຂໍລົມສາຍກັບ ຫົວໜ້າ ຄິມຊູມີແດ່.

여자 네, 잠깐만 기다리세요.
ເຈົ້າ, ກະລຸນາ ລໍຖ້າໜ້ອຍໜຶ່ງເດີ.

**맞다** ແມ່ນ, ຖືກ
- 이 문제의 정답은 3번이 맞아요.
  ຄໍາຕອບ ຂອງຄໍາຖາມນີ້ ແມ່ນຂໍ້ສາມ.
- 가: 노이 씨는 라오스 사람이에요?
  ຄົນຊື່ນ້ອຍນັ້ນ ແມ່ນຄົນລາວບໍ?
  나: 네, 맞아요.
  ເຈົ້າ, ແມ່ນແລ້ວ.

**잠깐만 기다리세요** ກະລຸນາ ລໍຖ້າໜ້ອຍໜຶ່ງ
- 가: 노이 씨 좀 바꿔주세요.
  ຂໍລົມສາຍກັບ ນ້ອຍແດ່.
  나: 네, 잠깐만 기다리세요.
  ເຈົ້າ, ກະລຸນາ ລໍຖ້າໜ້ອຍໜຶ່ງ.
- 잠깐만 기다리세요. 제가 자리를 안내해 드릴게요.
  ກະລຸນາ ລໍຖ້າໜ້ອຍໜຶ່ງ. ຂ້ອຍຈະແນະນໍາບ່ອນນັ່ງໃຫ້.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄໍາຖາມຕໍ່ໄປນີ້.

1. 투안 씨는 어디에 전화했어요? ຕວນ ໂທລະສັບ ໄປໃສ?
2. 투안 씨는 누구하고 통화하고 싶어해요? ຕວນ ຕ້ອງການລົມໂທລະສັບກັບໃຜ?

**정답** 1. 한국가구에 전화했어요.
2. 김수미 과장님하고 통화하고 싶어해요.





## 어휘 1 ຄຳສັບ 1 전화 ການໂທລະສັບ



ຕໍ່ໄປ ແມ່ນບັນດາສຳນວນຈຳນວນໜຶ່ງທີ່ກ່ຽວກັບການໂທລະສັບ ພວກເຮົາລອງມາເບິ່ງນຳກັນວ່າ ມີຫຍັງແດ່?



전화
ໂທລະສັບ



휴대전화(휴대폰)
ໂທລະສັບມືຖື



스마트폰
ສະມາດໂຟນ




인터넷 전화
ໂທລະສັບທີ່ໃຊ້ອິນເຕີເນັດ




전화를 걸다
ໂທ




전화가 오다
ສາຍເຂົ້າ



전화를 받다
ຮັບໂທລະສັບ



(전화) 통화하다
ລົມໂທລະສັບ




전화를 바꾸다
ຂໍປ່ຽນສາຍໂທລະສັບ




전화를 잘못 걸다
ໂທຜິດເບີ



전화를 끊다
ວາງສາຍ




통화 중이다
ສາຍບໍ່ຫວ່າງ




휴대전화를 켜다
ເປີດໂທລະສັບ




휴대전화를 끄다
ປິດໂທລະສັບ



문자를 보내다
ສົ່ງຂໍ້ຄວາມ



문자를 확인하다
ກວດຂໍ້ຄວາມ



ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

1. 그림에 맞는 표현을 〈보기〉에서 골라 넣으세요.
ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




1) 

2) 




3) 



4) 

보기
- 전화를 바꾸다
- 전화를 잘못 걸다
- 전화를 끊다
- 통화 중이다

정답 1) 전화를 잘못 걸다 2) 전화를 바꾸다 3) 통화 중이다 4) 전화를 끊다

## 문법 1 ໄວຍາກອນ 1 -지요


G19-1



'-지요' ໃຊ້ເພື່ອຖາມຄືນເບິ່ງວ່າ ສິ່ງທີ່ເຮົາຮູ້ຖືກຕ້ອງ ຫຼື ບໍ່? ມັນຖືກໃຊ້ຕື່ມທ້າຍຄຳກຳມະ, ຄຳຄຸນາມ, ຄຳນາມ+이다. ມັນມີຄວາມໝາຍວ່າ 'ແມ່ນບໍ?'.

| 동사(ຄຳກຳມະ) → -지요 | 형용사(ຄຳຄຸນນາມ) → -지요 | 명사(ຄຳນາມ) | |
|---|---|---|---|
| | | 자음(ພະຍັນຊະນະ) → **이지요** | 모음(ສະຫຼະ) → **지요** |
| 알다 → 알**지요**<br>보다 → 보**지요** | 작다 → 작**지요**<br>크다 → 크**지요** | 학생 → 학생**이지요** | 의사 → 의사**지요** |

- 가: 오늘 회사에 **가지요**? ມື້ນີ້ ເຈົ້າໄປບໍລິສັດແມ່ນບໍ?
  나: 네, 회사에 가요. ເຈົ້າ. ຂ້ອຍຈະໄປບໍລິສັດ.
- 가: 철수 씨가 **은행원이지요**? ຊອນຊູແມ່ນພະນັກງານທະນາຄານແມ່ນບໍ?
  나: 네, 은행원이에요. ເຈົ້າ. ລາວແມ່ນພະນັກງານທະນາຄານ.



**비교해 보세요** ຈົ່ງປຽບທຽບລອງເບິ່ງ

### ✔ ລະຫວ່າງ '-지요' ແລະ '-아/어요'

'-지요' ແລະ '-아/어요' ທັງສອງຮູບນີ້ ແມ່ນສາມາດໃຊ້ເຂົ້າໃນການສ້າງປະໂຫຍກຄຳຖາມ. ກໍລະນີຖາມເຖິງສິ່ງທີ່ເຮົາບໍ່ຮູ້ຫຍັງ ເຮົາໃຊ້ '-아/어요' ແລະ '-지요' ໃຊ້ຖາມໃນກໍລະນີທີ່ເຮົາຄິດວ່າ ຄູ່ສົນທະນາກໍຮູ້ຄຳຕອບສິ່ງທີ່ເຮົາຈະຖາມຢູ່ແລ້ວ.



ເຂົ້າໃຈການໃຊ້ '-지요' ແລ້ວບໍ? ສະນັ້ນ ຈົ່ງລອງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນຄືດັ່ງ ຕົວຢ່າງ.

**2. 그림을 보고 〈보기〉처럼 대화를 완성하세요.** ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.

보기




가: 거기 도서관이지요? ບ່ອນນີ້ ແມ່ນຫໍສະໝຸດແມ່ນບໍ?
나: 네, 그런데요. 무슨 일이세요? ແມ່ນແລ້ວ, ແຕ່ວ່າ ມີວຽກຫຍັງບໍ?

1) 


가: 거기 ____________________?
나: 네, 119입니다. 무슨 일이세요?

2) 


가: 거기 ____________________?
나: 네, 그런데요. 무슨 일이세요?

3) 

가: 제 딸이에요. ____________________?
나: 와! 진짜 귀엽네요.

4) 

가: 일이 다 ____________________?
나: 아니요, 다 안끝났어요.

정답 1) 119지요 2) 주민센터지요 3) 귀엽지요 4) 끝났지요



## 대화 2 ບົດສົນທະນາ 2

Track 62



ຊູຣູ ແລະ ຈີ່ຍອງ ສົນທະນາກັນກ່ຽວກັບການຊື້ເຄື່ອງທາງອິນເຕີເນັດ. ພວກເຂົາກຳລັງເວົ້າລົມກັນກ່ຽວກັບຫຍັງ? ກ່ອນອື່ນ ຈົ່ງຟັງກ່ອນສອງຄັ້ງ. ຈົ່ງສະແດງບົດບາດເປັນ ຊູຣູ ແລະ ຈີ່ຍອງ ແລ້ວເວົ້າຕາມ.

수루 **지영 씨는 주로 어디에서 옷을 사요?**
ຈີ່ຍອງ ປົກກະຕິແລ້ວ ເຈົ້າຊື້ເສື້ອຜ້າຢູ່ໃສ?

지영 **저는 주로 인터넷에서 많이 사요.**
ປົກກະຕິແລ້ວ ຂ້ອຍຈະຊື້ຜ່ານທາງອິນເຕີເນັດເປັນສ່ວນຫຼາຍ.

수루 **인터넷은 옷이 비싸지 않아요?**
ຊື້ຜ່ານທາງອິນເຕີເນັດ ເສື້ອລາຄາບໍ່ແພງບໍ?

지영 **아니요, 인터넷이 옷도 싸고 쇼핑도 편리해요.**
ບໍ່, ຊື້ຜ່ານທາງອິນເຕີເນັດ ລາຄາເສື້ອກໍຖືກ ແລະ ການຊື້ເຄື່ອງກໍສະດວກ.

수루 **그래요? 외국인도 한국 사이트에 회원 가입이 돼요?**
ແມ່ນບໍ? ຄົນຕ່າງປະເທດ ກໍສາມາດສະໝັກເປັນສະມາຊິກຂອງເວັບໄຊເກົາຫຼີໄດ້ບໍ?

지영 **네, 대부분 돼요. 그런데 외국인등록번호가 필요해요.**
ເຈົ້າ, ສ່ວນຫຼາຍແລ້ວແມ່ນໄດ້. ແຕ່ວ່າ ຕ້ອງມີເລກບັດຄົນຕ່າງດ້າວ.

> **주로** ປົກກະຕິ, ເລື້ອຍໆ
> ໝາຍເຖິງສິ່ງທີ່ກະທຳເລື້ອຍໆ ຫຼື ເປັນຫຼັກ
> - 퇴근 후에는 주로 운동을 해요.
>   ປົກກະຕິແລ້ວ ຫຼັງຈາກເລີກວຽກ ຈະອອກກຳລັງກາຍເປັນປົກກະຕິ.
> - 저는 주로 지하철을 타고 출근해요.
>   ຂ້ອຍ ຈະຂີ່ລົດໄຟໃຕ້ດິນ ໄປເຮັດວຽກເປັນປົກກະຕິ.

> **대부분** ສ່ວນໃຫຍ່, ສ່ວນຫຼາຍ
> ເປັນການສະແດງເຖິງຈຳນວນທີ່ເກືອບເທົ່າທຽມກັບທັງໝົດ ຫຼື ສ່ວນຫຼາຍ
> - 우리 회사 직원은 대부분 남자예요.
>   ບໍລິສັດພວກເຮົາ ພະນັກງານສ່ວນຫຼາຍແມ່ນເພດຊາຍ.
> - 여기에 있는 책은 대부분 제가 읽은 책이에요.
>   ປຶ້ມທີ່ມີຢູ່ນີ້ສ່ວນຫຼາຍແມ່ນປຶ້ມທີ່ຂ້ອຍອ່ານໝົດແລ້ວ.





ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 지영 씨는 주로 어디에서 옷을 사요? ຈີ່ຍອງ ປົກກະຕິແລ້ວ ຊື້ເຄື່ອງນຸ່ງຢູ່ໃສ?
2. 외국인이 인터넷 사이트에 가입하려면 뭐가 필요해요?
   ຄົນຕ່າງປະເທດ ຖ້າສະມັກເປັນສະມາຊິກຂອງເວັບໄຊຂອງ ເກົາຫຼີ ແມ່ນຫຍັງທີ່ຈຳເປັນຕ້ອງມີ?

정답 1. 인터넷에서 사요.
2. 외국인등록번호가 필요해요.



## 어휘 2 ຄຳສັບ 2 인터넷 ອິນເຕີເນັດ



ພວກເຮົາລອງໄປເບິ່ງບັນດາຄຳສັບກ່ຽວກັບ ອິນເຕີເນັດ ແລະ ສຳນວນທີ່ກ່ຽວຂ້ອງນຳກັນບໍວ່າ ມີຫຍັງແດ່?



인터넷
ອິນເຕີເນັດ



웹사이트
ເວັບໄຊ




검색 엔진
ເຄື່ອງມືຄົ້ນຫາ



홈페이지
ໜ້າເວັບ



블로그
ບຼອກ



인터넷 카페
ອິນເຕີເນັດ ຄາເຟ



회원 가입
ສະໝັກເປັນສະມາຊິກ



회원 탈퇴
ລຶບບັນຊີສະມາຊິກ



아이디
ໄອດີ



비밀번호
ລະຫັດ



로그인
ເຂົ້າສູ່ລະບົບ



로그아웃
ອອກຈາກລະບົບ



이메일
ອີເມວ



인터넷 검색
ການຄົ້ນຫາທາງອິນເຕີເນັດ



인터넷 채팅
ການສົນທະນາທາງອິນເຕີເນັດ



화상 채팅
ການລົມທາງວິດີໂອ



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요.

ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.



1)



2)



3)



4)



보기

이메일
비밀번호
로그아웃
화상 채팅

정답 1) 화상 채팅 2) 이메일 3) 비밀번호 4) 로그아웃

## 문법 2 ໄວຍາກອນ 2 -고

'-고' ໃຊ້ເພື່ອເຊື່ອມຕໍ່ປະໂຫຍກໜ້າກັບປະໂຫຍກຫຼັງ (ທີ່ມີຄວາມໝາຍພົງກັນ) ເຂົ້າກັນ. ມັນຖືກໃຊ້ຕື່ມທ້າຍຄຳກຳມະ, ຄຳຄຸນນາມ, 'ຄຳນາມ+이다'.

| 동사(ຄຳກຳມະ) → -고 | 형용사(ຄຳຄຸນນາມ) → -고 | 명사(ຄຳນາມ) 자음(ພະຍັນຊະນະ) → 이고 | 명사(ຄຳນາມ) 모음(ສະຫຼະ) → 고 |
|---|---|---|---|
| 먹다 → 먹**고**<br>보다 → 보**고** | 작다 → 작**고**<br>크다 → 크**고** | 회사원 → 회사원**이고** | 간호사 → 간호사**고** |

- 가: 왜 인터넷 쇼핑을 좋아해요? ເປັນຫຍັງເຈົ້າຈຶ່ງມັກຊື້ເຄື່ອງທາງອິນເຕີເນັດ?
  나: **싸고** 편리해서 좋아해요. ຂ້ອຍມັກ ເພາະວ່າມັນສະດວກສະບາຍ ແລະ ລາຄາຖືກ.
- 가: 뭐 먹을 거예요? ເຈົ້າຈະກິນຫຍັງ?
  나: 저는 비빔밥을 **먹고** 노이 씨는 김치찌개를 먹을 거예요. ຂ້ອຍຈະກິນບີບິມບັບ (ແລະ) ສ່ວນນ້ອຍຈະກິນຄິມຈິຈີເກ.



ເຂົ້າໃຈການໃຊ້ '-고' ແລ້ວບໍ? ສະນັ້ນ ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນຄືດັ່ງຕົວຢ່າງ.

2. 메모를 보고 <보기>처럼 대화를 완성하세요.
ຈົ່ງເບິ່ງໂນດຫຍໍ້ ແລ້ວຕື່ມໃສ່ບົດສົນທະນາ ຄືດັ່ງຕົວຢ່າງ.

보기
**투안 씨**
- 친절해요.
- 재미있어요.

가: 투안 씨가 어때요? ຕວນ ເປັນຄົນແນວໃດບໍ?
나: 친절하고 재미있어요. ລາວເປັນຄົນໃຈດີ ແລະ ມັກມ່ວນ.

1) **그 식당**
- 싸요.
- 맛있어요.

가: 그 식당이 어때요?
나: ______________________.

2) **오늘 날씨**
- 맑아요.
- 따뜻해요.

가: 오늘 날씨가 어때요?
나: ______________________.

3) **지금 뭐 해요?**
- 투안: 자요.
- 리한: 인터넷해요.

가: 투안하고 리한은 지금 뭐 해요?
나: ______________________.

4) **오늘 메뉴**
- 점심: 비빔밥
- 저녁: 불고기덮밥

가: 오늘 메뉴가 뭐예요?
나: ______________________.

정답 1) 싸고 맛있어요 2) 맑고 따뜻해요 3) 투안은 자고 리한은 인터넷해요
4) 점심은 비빔밥이고 저녁은 불고기덮밥이에요

## 활동 ກິດຈະກຳ

〈보기〉처럼 전화 내용을 메모하고 전화해 보세요.
ຈົ່ງສະຫຼຸບຫຍໍ້ ເນື້ອໃນການສົນທະນາທາງໂທລະສັບ ແລະ ສົນທະນາທາງໂທລະສັບລອງເບິ່ງ.

전화 내용 ເນື້ອໃນການໂທລະສັບ

| | 누구에게 전화하고 싶어요? | 왜 전화하고 싶어요? |
|---|---|---|
| 보기 ຕົວຢ່າງ | 수루 씨에게 전화하고 싶어요.<br>ຢາກໂທລະສັບຫາ ຊຸຣູ. | 오늘이 수루 씨 생일이에요.<br>ມື້ນີ້ ແມ່ນວັນເກີດຂອງ ຊຸຣູ.<br>그래서 축하해 주고 싶어요.<br>ສະນັ້ນ ຈຶ່ງຢາກສະແດງຄວາມຍິນດີນຳ. |
| 1) | 투안 씨에게 전화하고 싶어요.<br>ຢາກໂທລະສັບຫາ ຕວນ. | 오늘 출근을 안 했어요.<br>ມື້ນີ້ ບໍ່ໄດ້ໄປເຮັດວຽກ.<br>그래서 왜 안 왔는지 물어 보고 싶어요.<br>ສະນັ້ນ ເປັນຫຍັງ ຈຶ່ງບໍ່ມາເຮັດວຽກ ຈຶ່ງຢາກລອງຖາມເບິ່ງ. |
| 2) | | |



전화 대화 ການສົນທະນາ ທາງໂທລະສັບ

보기 ຕົວຢ່າງ

가: 여보세요. 수루 씨 전화지요? ສະບາຍດີ. ຊຸຣູ ກຳລັງລົມສາຍແມ່ນບໍ?
나: 네, 그런데요. 실례지만 누구세요? ເຈົ້າ, ແມ່ນແລ້ວ. ຂໍໂທດ ແມ່ນໃຜເນາະ?
가: 투안이에요. ຂ້ອຍແມ່ນຕວນ.
나: 아! 투안 씨, 안녕하세요? 무슨 일이에요?
ອາ, ຕວນ. ສະບາຍດີບໍ? ມີວຽກຫຍັງບໍ?
가: 오늘이 수루 씨 생일이지요? 축하해요.
ມື້ນີ້ແມ່ນວັນເກີດຂອງ ຊຸຣູບໍ່ແມ່ນຫວາ? ສະແດງຄວາມຍິນດີນຳເດີ.

# 생활에 유용한 전화번호

ເບີໂທລະສັບທີ່ສຳຄັນໃນຊີວິດປະຈຳວັນ






범죄 신고
ແຈ້ງເຫດອາດສະຍາກຳ
112

출입국관리사무소,
체류 신고 등
ແຈ້ງຫ້ອງການເຂົ້າ-ອອກເມືອງ, ແຈ້ງການອະນຸຍາດພັກເຊົາ ແລະ ອື່ນໆ
1345






전화번호 안내
ຂໍ້ມູນກ່ຽວກັບເບີໂທລະສັບ
114

고용노동부 고객상담센터
ສູນໃຫ້ຄຳປຶກສາສຳລັບການຈ້າງງານ ແລະ ຜູ້ອອກແຮງງານ

1350






화재, 응급 환자 발생 신고
ແຈ້ງເຫດການໄປໄຟໄໝ້ ແລະ ເຫດບາດເຈັບສຸກເສີນ

119

외국인력상담센터
ສູນໃຫ້ຄຳປຶກສາຂອງແຮງງານຕ່າງປະເທດ

1577-0071







기초 지방자치단체 각종 생활 민원 신고 ແຈ້ງເພື່ອຂໍຄວາມຊ່ວຍເຫຼືອໃນກໍລະນີເກີດເຫດສຸກເສີນ.

120

이주여성 긴급지원 센터
ສູນຊ່ວຍເຫຼືອສຸກເສີນແມ່ຍິງຕ່າງດ້າວ

1577-1336






일기예보 안내
ຂໍ້ມູນຂ່າວສານກ່ຽວກັບດິນຟ້າອາກາດ

131

외국인주민통역상담지원센터
ສູນຊ່ວຍເຫຼືອໃນການແປພາສາຂອງພົນລະເມືອງຕ່າງດ້າວ

1577-1336



# EPS-TOPIK 듣기 ພາກຟັງ EPS-TOPIK



ສຳລັບຂໍ້ 1 ແລະ 2 ແມ່ນເປັນການເບິ່ງຮູບພາບ ແລ້ວເລືອກເອົາຄຳສັບທີ່ເໝາະສົມ. ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

[1~2] 다음 그림을 보고 알맞은 단어를 고르십시오.

Track 63

ຈົ່ງເບິ່ງຮູບພາບ ແລ້ວເລືອກເອົາຄຳສັບທີ່ຖືກຕ້ອງກັບຮູບພາບນັ້ນ.

1. ① ② ③ ④

2. ① ② ③ ④



ຕໍ່ໄປນີ້ ເປັນການຟັງຄຳຖາມ ແລະ ເລືອກເອົາຄຳຕອບທີ່ເໝາະສົມ. ກ່ອນຈະຟັງຄຳຖາມ ຈົ່ງກວດເບິ່ງເນື້ອໃນຂອງຄຳຕອບອີກຄັ້ງໜຶ່ງສາກ່ອນ.

[3~5] 질문을 듣고 알맞은 대답을 고르십시오.

ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

3. ① 네, 그런데요. ② 네, 거기예요.
   ③ 아니요, 거기 없어요. ④ 아니요, 도서관이에요.

4. ① 여기는 회사예요. ② 저는 투안이에요.
   ③ 이것은 전화예요. ④ 오늘은 월요일이에요.

5. ① 맵고 짜요. ② 작고 비싸요.
   ③ 맑고 따뜻해요. ④ 착하고 친절해요.



## 듣기 대본 ເນື້ອໃນບົດຟັງ

1. ① 남: 문자 ຂໍ້ຄວາມ　　② 남: 전화 ໂທລະສັບ
   ③ 남: 검색 ຄົ້ນຫາ　　④ 남: 채팅 ແຊັດລົມກັນ
2. ① 여: 블로그 ບລອກ　　② 여: 아이디 ໄອດີ
   ③ 여: 로그인 ເຂົ້າສູ່ລະບົບ　　④ 여: 인터넷 ອິນເຕີເນັດ
3. 남: 여보세요. 거기 도서관이지요? ສະບາຍດີ, ນີ້ແມ່ນຫໍສະໝຸດແມ່ນບໍ?
4. 여: 실례지만 누구세요? ຂໍໂທດ, ແມ່ນໃຜເນາະ?
5. 남: 오늘 날씨가 어때요? ມື້ນີ້ ອາກາດເປັນແນວໃດບໍ?

정답 1. ② 2. ④ 3. ① 4. ② 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ

L-19

1. 잘 듣고 내용과 관계있는 그림을 고르십시오.
   ຈົ່ງຟັງໃຫ້ດີ ແລ້ວເລືອກເອົາຮູບພາບ ທີ່ກ່ຽວຂ້ອງກັບເນື້ອໃນບົດຟັງນັ້ນ.

①



②


③


④


2. 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.
   ① 어제 전화했어요.　　② 사장님이 전화했어요.
   ③ 가구 회사에 전화했어요.　　④ 시청 앞에서 전화했어요.

3. 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.
   ① 모두 신청해요.　　② 초급을 신청해요.
   ③ 토요일에 신청해요.　　④ 홈페이지에서 신청해요.

## 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 친구한테 문자를 보냈어요. ເຈົ້າໄດ້ສົ່ງຂໍ້ຄວາມໃຫ້ໝູ່ເພື່ອນແລ້ວບໍ?
2. 남: 어디에 전화를 걸었어요? ເຈົ້າໄດ້ໂທລະສັບໄປໃສ?
3. 남: 한국어 수업은 어떻게 신청해요? ເຈົ້າສະໝັກຮຽນ ພາສາເກົາຫຼີແນວໃດບໍ?

정답 1. ② 2. ③ 3. ④



## EPS-TOPIK 읽기 ພາກອ່ານ EPS-TOPIK



ສຳລັບ 1 ແລະ 2 ແມ່ນເປັນຄຳຖາມກ່ຽວກັບການເບິ່ງຮູບພາບ ແລ້ວເລືອກເອົາປະໂຫຍກທີ່ ຖືກຕ້ອງ. ຈົ່ງ ເລືອກເອົາປະໂຫຍກທີ່ເໝາະສົມກັບຮູບພາບ.

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1.



① 전화를 걸어요. ② 전화를 바꿔요.
③ 전화를 받아요. ④ 전화를 끊어요.

2.




① 통화해요. ② 채팅해요.
③ 가입해요. ④ 검색해요.



ຕໍ່ໄປ ເປັນການເລືອກເອົາສຳນວນຕື່ມໃສ່ຫວ່າງທີ່ເປັນບົດສົນທະນາ ຫຼື ປະໂຫຍກ. ຈົ່ງຄິດທົບທວນກ່ຽວກັບສິ່ງທີ່ໄດ້ຮຽນມາ ແລ້ວຕອບຄຳຖາມຕໍ່ໄປນີ້.

[3~5] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.

가: 식당이 ______________? ຮ້ານອາຫານ ເປັນແນວໃດ?

나: 싸고 맛있어요. ອາຫານລາຄາຖືກ ແລະ ແຊບ.

① 어때요 ② 뭐 해요 ③ 언제예요 ④ 얼마예요

4.

가: 거기 병원이지요? ບ່ອນນີ້ແມ່ນ ໂຮງໝໍບໍ?

나: ______________. 여기는 약국이에요. ເຈົ້າໂທລະສັບຜິດແລ້ວ. ບ່ອນນີ້ ແມ່ນຮ້ານຂາຍຢາ.

① 전화를 껐어요 ② 문자가 왔어요
③ 문자를 보냈어요 ④ 전화 잘못 거셨어요

5.

저는 인터넷 검색하고 인터넷 채팅을 자주 해요. 그리고 인터넷 쇼핑도 많이 해요. 인터넷 쇼핑은 ______________. 그래서 저는 주로 인터넷에서 옷을 많이 사요.

ຂ້ອຍ ຊອກຂໍ້ມູນທາງອິນເຕີເນັດ ແລະ ແຊັດລົມທາງອອນລາຍເລື້ອຍໆ. ພ້ອມນັ້ນ ຊື້ເຄື່ອງທາງອອນລາຍກໍຫຼາຍ. ການຊື້ເຄື່ອງທາງອອນລາຍ ແມ່ນລາຄາຖືກ ແລະ ສະດວກສະບາຍ. ສະນັ້ນ ຂ້ອຍຈຶ່ງມັກຊື້ເສື້ອຜ້າ ຜ່ານທາງອອນລາຍເລື້ອຍໆ.

① 싸고 편리해요 ② 어렵고 복잡해요
③ 시간하고 돈이 필요해요 ④ 아이디하고 비밀번호가 있어요

정답 1. ③ 2. ④ 3. ① 4. ④ 5. ①



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 요즘은 ________(으)로 많은 것을 할 수 있습니다. 인터넷만 연결되어 있으면 영화도 볼 수 있고 한국어 강의도 들을 수 있습니다.
ໃນປັດຈຸບັນ ສາມາດນຳໃຊ້ຄອມພິວເຕີເຮັດໃນຫຼາຍສິ່ງຫຼາຍຢ່າງ. ຖ້າສາມາດເຊື່ອມຕໍ່ອະເຕີເນັດໄດ້ ແມ່ນສາມາດເບິ່ງໜັງ ແລະ ຮັບຟັງບົດຮຽນພາສາເກົາຫຼີໄດ້.

① 컴퓨터 ② 라디오 ③ 공중전화 ④ 텔레비전

2. 친구가 전화를 했지만 회의 중이라서 친구한테 온 전화를 ______ 수 없었습니다.
ໝູ່ເພື່ອນໂທລະສັບມາຫາ ເນື່ອງຈາກກຳລັງຢູ່ຫ້ອງປະຊຸມ ຈຶ່ງບໍ່ສາມາດຮັບໂທລະສັບໄດ້.

① 내릴 ② 바꿀 ③ 받을 ④ 끊을

3. 쇼핑을 할 때 인터넷을 이용하면 더 좋습니다. 가게에서보다 물건을 ______ 편리하게 살 수 있습니다.
ເມື່ອຊື້ເຄື່ອງຂອງ ຖ້າສາມາດໃຊ້ອິນເຕີເນັດ ແມ່ນຈະດີຫຼາຍ. ທຽບໃສ່ຊື້ຢູ່ຕາມຮ້ານ ແມ່ນລາຄາຈະຖືກກວ່າ ແລະ ຊື້ໄດ້ສະດວກສະບາຍກວ່າ.

① 싸고 ② 싸게 ③ 싸서 ④ 싸면




 발음 ການອອກສຽງ 

### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ໃນພະຍາງສຸດທ້າຍຂອງພາສາເກົາຫຼີ ທີ່ອອກສຽງເປັນພະຍັນຊະນະ ແມ່ນມີໜ້ອຍ. ໃນກໍລະນີນີ້ ມີ ພຽງ 7 ພະຍັນຊະນະ ເທົ່ານັ້ນ ທີ່ສາມາດອອກສຽງໄດ້. ສຳລັບກໍລະນີທີ່ພະຍັນສະນະທີ່ບໍ່ມີສຽງ ຫຼື ສຽງເຄິ່ງສະຫຼະ-ເຄິ່ງພະຍັນຊະນະ ແມ່ນອອກສຽງໄປຕາມສຽງຂອງມັນເອງເລີຍ. ຕົວຢ່າງເຊັ່ນ ສຽງເຄິ່ງ ສະຫຼະເຄິ່ງພະຍັນຊະນະ 'ㄴ, ㅁ, ㅇ' ແມ່ນຈະອອກສຽງເປັນ 'ㄴ [n], ㅁ [m], ㅇ [ŋ]' ໄປຕາມແຕ່ລະຕົວເລີຍ.

(1) 손, 산, 돈, 문, 신문 (2) 김, 봄, 남자, 마음 (3) 강, 방, 시장, 공항
(4) 산과 바다에 가요. (5) 곰과 사자가 커요. (6) 모자와 가방 주세요.




# 저는 설거지를 할게요
## ຂ້ອຍຈະລ້າງຖ້ວຍ

**학습 안내**
ຄຳແນະນຳ ໃນການຮຽນ

- ☐ ຈຸດປະສົງໃນການຮຽນ — ການຂໍຮ້ອງເຮັດວຽກເຮືອນຊ່ວຍ, ການເວົ້າກ່ຽວກັບວຽກໃນເຮືອນ
- ☐ ໄວຍາກອນ — -(으)ㄹ게요, -는 것
- ☐ ຄຳສັບ ແລະ ສຳນວນຄຳເວົ້າ — ທຳຄວາມສະອາດ ວຽກເຮືອນ
- ☐ ຂໍ້ມູນກ່ຽວກັບວັດທະນາທຳ — ປະເພດຂີ້ເຫຍື້ອ ແລະ ການແຍກຂີ້ເຫຍື້ອ



## 대화 1 ບົດສົນທະນາ 1






ຕວນ ແລະ ຣີຮັນ ຈະອະນາໄມຫ້ອງນອນ, ກ່ອນອື່ນໝົດຟັງບົດສົນທະນາແລ້ວເວົ້າຕາມ.

투안 청소를 안 해서 방이 너무 더럽네요.
ຫ້ອງນອນເປື້ອນຫຼາຍ ເພາະວ່າບໍ່ໄດ້ອະນາໄມ.

리한 네, 바빠서 시간이 없었어요.
ແມ່ນແລ້ວ, ບໍ່ມີເວລາເພາະວ່າຫຍຸ້ງວຽກ.

투안 지금 같이 청소할래요?
ດຽວນີ້ມາອະນາໄມນຳກັນບໍ?

리한 그래요. 지금 해요.
ເອົາແນວນັ້ນເນາະ, ອະນາໄມດຽວນີ້ເລີຍ.
투안 씨는 방을 쓸어 주세요.
ຕວນປັດກວາດຫ້ອງນອນ.
저는 먼지를 닦을게요.
ຂ້ອຍຈະເຊັດຂີ້ຝຸ່ນ.

**너무** ຫຼາຍ
ຫຼາຍເກີນໄປ ຫຼືວ່າ ບໍ່ມີຂີດຈຳກັດ
- 비가 너무 많이 와요.
  ຕົກຫຼາຍ.
- 주말에 너무 늦게까지 잤어요.
  ໄດ້ເຂົ້ານອນເດິກຫຼາຍ.

**그래요** ແມ່ນແທ້ບໍ, ແນວນັ້ນເນາະ
ຄວາມໝາຍທີ່ເວົ້າເຖິງສິ່ງທີ່ເວົ້າກ່ອນໜ້ານີ້.
- 가: 같이 운동하러 갈래요?
  ໄປອອກກຳລັງກາຍນຳກັນບໍ?
  나: 그래요. 같이 가요.
  ແທ້ບໍ, ໄປອອກກຳລັງກາຍນຳກັນ.
- 가: 점심 때 김치찌개 먹을래요?
  ຕອນສວຍຈະກິນ ຄິມຈີຈີ່ເກບໍ?
  나: 그래요. 김치찌개 먹어요.
  ແມ່ນບໍ, ກິນ ຄິມຈີຈີ່ເກ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 투안 씨의 방이 어때요? ຫ້ອງຂອງຕວນເປັນແນວໃດ?
2. 두 사람은 무엇을 하려고 해요? ທັງສອງຄົນຈະເຮັດຫຍັງ?

정답 1. 더러워요. 2. 청소를 하려고 해요.





## 어휘 1 ຄຳສັບ 1 　 청소 ທຳຄວາມສະອາດ



ຕໍ່ໄປ ແມ່ນບັນດາສຳນວນຈຳນວນໜຶ່ງ ທີ່ກ່ຽວກັບ ການທຳຄວາມສະອາດ ພວກເຮົາລອງມາເບິ່ງ ນຳກັນວ່າ ມີຫຍັງແດ່?



더럽다
ເປິເປື້ອນ



깨끗하다
ສະອາດ



어지럽다
ຊະຊາຍ, ກະແຈກກະຈາຍ



정돈되어 있다
ຖືກຈັດໃຫ້ມີລະບຽບ



청소를 하다
ອະນາໄມ



청소기를 돌리다
ເປີດໃຊ້ຈັກດູດຝຸ່ນ



정리하다
ເກັບມ້ຽນ



먼지를 떨다
ປັດຝຸ່ນ



쓸다
ພອຍກວາດ



닦다
ເຊັດ, ທຳຄວາມສະອາດ



쓰레기를 버리다
ຖິ້ມຂີ້ເຫຍື້ອ



청소 도구
ອຸປະກອນອະນາໄມ



빗자루
ຢຸກວດ



걸레
ຜ້າຖູພື້ນ



휴지통
ຖັງຂີ້ເຫຍື້ອ (ສຳລັບເຈ້ຍອານາໄມ)



ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

1. 그림에 맞는 표현을 〈보기〉에서 골라 넣으세요.

ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.



1)



2)



3)



4)

보기
- 닦다
- 쓸다
- 버리다
- 정리하다

정답 1) 쓸다 2) 닦다 3) 정리하다 4) 버리다

## 문법 1 ໄວຍາກອນ 1 -(으)ㄹ게요




'-(으)ㄹ게요' ມັນຖືກໃຊ້ຕື່ມທ້າຍຄຳກຳມະ ເພື່ອຊີ້ບອກເຖິງຈຸດປະສົງທີ່ເຮົາຈະເຮັດສິ່ງໃດໜຶ່ງ.

| 자음(ພະຍັນຊະນະ) → **-을게요** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-ㄹ게요** |
|---|---|
| 찾다 → 찾**을게요** | 주다 → **줄게요**, 만들다 → 만**들게요** |

- 이따가 **전화할게요**. ອີກຈັກໜ້ອຍ ຈະໂທກັບ.
- 가: 내일은 지각하지 마세요. ມື້ອື່ນ ເຈົ້າຢ່າມາຊ້າເດີ.
  나: 네, 늦지 않고 일찍 **올게요**. ເຈົ້າ, ຈະບໍ່ຊ້າດອກ, ຂ້ອຍຈະມາໄວໆ.



**비교해 보세요** ຈົ່ງປຽບທຽບລອງເບິ່ງ

### ✔ ລະຫວ່າງ '-(으)ㄹ게요' ກັບ '-(으)ㄹ 거예요'

'-(으)ㄹ게요' ກັບ '-(으)ㄹ 거예요' ແມ່ນໃຊ້ຊີ້ບອກເຖິງສິ່ງທີ່ຈະເກີດຂຶ້ນໃນອະນາຄົດ. ສຳລັບ '-(으)ㄹ 거예요' ໃນກໍລະນີທີ່ຄຳຕົວຕັ້ງເປັນບຸລຸດທີ 1; ແມ່ນໃຊ້ເພື່ອຊີ້ບອກເຖິງຄວາມຕັ້ງໃຈອັນແນ່ນອນຂອງຜູ້ເວົ້າ. ໃນກໍລະນີເປັນບຸລຸດທີ 3 ແມ່ນໃຊ້ຊີ້ບອກເຖິງການຄາດຄະເນເຖິງອະນາຄົດທີ່ຈະເກີດຂຶ້ນ. ສ່ວນ '-(으)ㄹ게요' ແມ່ນໃຊ້ໃນເວລາທີ່ຜູ້ເວົ້າໄດ້ສັນຍາກັບຄູ່ສົນທະນາ. ໂດຍທົ່ວໄປແລ້ວ '-(으)ㄹ 거예요' ໃຊ້ກັບບຸລຸດທີ 1, 2, 3 ໄດ້ໝົດ ແຕ່ວ່າ '-(으)ㄹ게요' ສາມາດໃຊ້ແຕ່ບຸລຸດທີ 1 ໄດ້ເທົ່ານັ້ນ.

- 리한 씨가 앞으로 열심히 **할 거예요**.(O)
  리한 씨가 앞으로 열심히 할게요.(X)



ເຂົ້າໃຈການໃຊ້ '-(으)ㄹ게요' ແລ້ວບໍ? ສະນັ້ນ ຈົ່ງລອງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນຄືດັ່ງຕົວຢ່າງ.

2. <보기>처럼 대화를 완성하세요. ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນຄືດັ່ງຕົວຢ່າງ.

보기
가: 방을 닦으세요. ຈົ່ງເຊັດຫ້ອງນອນຂອງເຈົ້າ.
나: 네, <u>닦을게요.</u> ເຈົ້າ, ຂ້ອຍຈະເຊັດດອກ.

1) 가: 작업을 정리하세요.
   나: ____________________.

2) 가: 누가 저하고 같이 갈래요?
   나: 제가 같이 ____________________.

3) 가: 투안 씨는 내일 뭘 준비할래요?
   나: 저는 과일을 ____________________.

4) 가: 사진을 찍어 줄래요?
   나: 좋아요, 제가 사진을 ____________________.

정답 1) 정리할게요 2) 갈게요 3) 준비할게요 4) 찍어 줄게요

## 대화 2 ບົດສົນທະນາ 2

Track 65



ຕວນ ແລະ ຣີຮັນມັກແຕ່ງກິນບໍ? ກ່ອນໜົດຟັງຄືນສອງຄັ້ງ ແລ້ວເວົ້າຕາມ ການສົນທະນາຂອງຕວນ ແລະ ຣີຮັນ.

투안 어제 친구하고 불고기를 만들었어요.
ມື້ວານຂ້ອຍກັບເພື່ອນ ໄດ້ຄົ່ວຊີ້ນງົວ.
정말 재미있었어요. ມັນມ່ວນຫຼາຍ.

리한 투안 씨는 요리를 **하는 것**이 재미있어요?
ຕວນ ໄດ້ມີຄວາມມ່ວນຊື່ນ ກັບການແຕ່ງອາຫານບໍ?

투안 네, 전 정말 재미있어요.
리한 씨는요?
ເຈົ້າ, ຂ້ອຍມ່ວນຫຼາຍ, ຣີຮັນເດ ເປັນແນວໃດ?

리한 저는 재미없어요. **하지만** 설거지는 괜찮아요.
ຂ້ອຍບໍ່ມ່ວນເລີຍ ແຕ່ວ່າ ບໍ່ເປັນຫຍັງຈະຊ່ວຍລ້າງຖ້ວຍ.

투안 그래요? 그러면 **앞으로** 요리는 제가 할게요.
ແມ່ນບໍ? ຖ້າແນວນັ້ນ, ເທື່ອໜ້າ ຂ້ອຍຈະແຕ່ງກິນໃຫ້ເດີ.
설거지는 리한 씨가 하세요.
ຣີຮັນ ເຈົ້າລ້າງຖ້ວຍເດີ.

**앞으로** ຕໍ່ໄປນີ້

- 앞으로 기숙사 청소는 제가 할게요.
  ຕໍ່ໄປນີ້ຂ້ອຍຈະອະນາໄມ.
- 가: 오늘도 지각을 했어요?
  ມື້ນີ້ກໍ່ມາຊ້າບໍ?
  나: 죄송합니다. 앞으로 늦지 않겠습니다.
  ຂໍໂທດ, ຕໍ່ໄປຈະບໍ່ມາຊ້າອີກແລ້ວ.

**하지만** ແຕ່ວ່າ

ໃຊ້ເວົ້າໃນເວລາເວົ້າເນື້ອໃນທາງໜ້າ ແລະ ເນື້ອໃນດ້ານຫຼັງມີຄວາມໝາຍກົງກັນຂ້າມກັນ.

- 저는 키가 커요. 하지만 제 동생은 키가 작아요.
  ຂ້ອຍເປັນຄົນສູງ ແຕ່ວ່າ ນ້ອງຊາຍຂ້ອຍຂອງຕ່ຳ.
- 한국 음식은 맛있어요. 하지만 좀 매워요.
  ອາຫານເກົາຫຼີເຜັດແຕ່ວ່າເຜັດໜ້ອຍໜຶ່ງ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 투안 씨는 어제 뭘 했어요? ຕວນ ໄດ້ເຮັດຫຍັງມື້ວານນີ້?
2. 리한 씨는 요리하는 것을 좋아해요? ຣີຮັນ ມັກແຕ່ງການກິນບໍ?

정답 1. 불고기를 만들었어요. 2. 아니요, 안 좋아해요.

**Tip 있다/없다 형용사** 있다/없다 ຄຳຄຸນນາມ ມີ/ບໍ່ມີ

'재미가 있어요'가 줄어서 '재미있어요'가 되었습니다. 한국어에는 이런 방식으로 만들어진 형용사가 있습니다.
ໃນສຳນວນ '재미가 있어요' ສາມາດຫຍໍ້ເປັນ '재미있어요. ໃນພາສາເກົາຫຼີນັ້ນ ສາມາດສ້າງຄຳສັບເປັນຄຳຄຸນນາມ ດ້ວຍແບບວິທີນີ້ໄດ້.

| | |
|---|---|
| 재미가 있다 → 재미있다 | 재미가 없다 → 재미없다 |
| 맛이 있다 → 맛있다 | 맛이 없다 → 맛없다 |
| 멋이 있다 → 멋있다 | 멋이 없다 → 멋없다 |



## 어휘 2 ຄຳສັບ 2 　 집안일 ວຽກເຮືອນ



ພວກເຮົາມາຮຽນຮູ້ສຳນວນທີ່ໃຊ້ກ່ຽວຂ້ອງກັບວຽກເຮືອນມີຫຍັງແດ່?



장을 보다
ອອກຕະຫຼາດ



밥을 하다(짓다)
ຫຸງເຂົ້າ



음식을 만들다
ແຕ່ງອາຫານ



설거지를 하다
ລ້າງຖ້ວຍ



밥솥
ໝໍ້ຫຸງເຂົ້າ



냄비
ໝໍ້ແກງ



프라이팬
ໝໍ້ຂາງ



주방 세제
ນ້ຳຢາລ້າງຖ້ວຍ



빨래를 하다
ຊັກເຄື່ອງ



세탁기를 돌리다
ປັ່ນເຄື່ອງ (ຈັກຊັກຜ້າ)



빨래를 널다
ຕາກເຄື່ອງ



빨래를 걷다
ກຸ້ເຄື່ອງ



옷을 다리다
ລີດເສື້ອ



옷을 개다
ພັບເສື້ອ



세탁세제
ແຟບຊັກເຄື່ອງ



다리미
ເຕົາລີດ



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ? ຕອບໝົດແລ້ວບໍ? ຄຳສັບໃດຍາກ? ຖືກຈັກຂໍ້?

1. 그림에 맞는 표현을 〈보기〉에서 골라 넣으세요.

ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.





1) 　 2) 　 3) 　 4)

보기
장을 보다
옷을 다리다
빨래를 하다
설거지를 하다

정답 1) 설거지를 하다 2) 장을 보다 3) 옷을 다리다 4) 빨래를 하다

## 문법 2 ໄວຍາກອນ 2 -는 것






'-는 것' ມັນໃຊ້ຕື່ມທ້າຍຄຳກຳມະ, ແມ່ນຮູບແບບການປ່ຽນຄຳກຳມະໃຫ້ກາຍເປັນຮູບຄຳຄ້າຍຄືກັບຄຳນາມ.

- 가: 옷을 **다리는 것**이 너무 어려워요. ການລີດເຄື່ອງແມ່ນຍາກຫຼາຍ.
  나: 그래요? 그럼 제가 다려 줄게요. ແມ່ນບໍ ? ຄັນຊັ້ນ, ຂ້ອຍຈະລີດຊ່ວຍ.
- 가: 왜 항상 밖에서 밥을 사 먹어요? ເປັນຫຍັງເຈົ້າຄືກິນເຂົ້າຢູ່ນອກບ້ານຕະຫຼອດ?
  나: 저는 **요리하는 것**을 싫어해요. 그래서 사 먹어요. ຂ້ອຍບໍ່ມັກການແຕ່ງອາຫານ. ກໍເລີຍຊື້ກິນເອົາ.



### 대조적 정보 ການປຽບທຽບ

'-는 것' ໃນພາສາລາວມີຄວາມໝາຍວ່າ 'ການ' ເຊິ່ງທັງສອງຮູບແບບ ແມ່ນທຳໜ້າທີ່ປ່ຽນຄຳກຳມະເປັນຮູບຄຳຄ້າຍຄືກັບຄຳນາມ. ໃນພາສາລາວ, ໃນກໍລະນີທີ່ເວົ້າກັບຄົນທີ່ສະໜິດເຮົາບໍ່ຕ້ອງເວົ້າແບບເປັນທາງການກໍໄດ້ ແລະ ບໍ່ຈຳເປັນຕ້ອງຕື່ມ 'ການ' ຢູ່ຕໍ່ໜ້າຄຳກຳມະ.

- 외국어를 **배우는 것**이 재미있다. ຮຽນພາສາຕ່າງປະເທດມ່ວນ.
- 아침에 일찍 **일어나는 것**이 어렵다. ຕື່ນນອນຕັ້ງແຕ່ເຊົ້າລຳບາກ.



ເຂົ້າໃຈກ່ຽວກັບ '-는 것' ແລ້ວບໍ? ສະນັ້ນ ຈົ່ງຕື່ມບົດສົນທະນາລຸ່ມນີ້ ໃຫ້ຄົບຖ້ວນລອງເບິ່ງ.

**2. 그림을 보고 〈보기〉처럼 대화를 완성하세요.**

ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ຄືດັ່ງຕົວຢ່າງ.

보기



가: 요리가 힘들지 않아요? ແຕ່ງອາຫານບໍ່ເມື່ອຍບໍ?
나: 괜찮아요. 저는 음식을 만드는 것이 재미있어요.
ບໍ່ເປັນຫຍັງ, ສຳລັບຂ້ອຍ ການແຕ່ງອາຫານ ເປັນເລື່ອງທີ່ມ່ວນ.

1)



가: 먼지가 너무 많아요.
나: 청소할 때는 창문을 ______________이 좋아요.

2)



가: 왜 빨래를 안 했어요?
나: 비가 올 때는 빨래를 ______________이 안 좋아요.

3)



가: 왜 옷을 모두 다려요?
나: 저는 옷을 ______________이 재미있어요.

4)

가: 왜 사진을 안 찍어요?
나: 저는 사진 ______________을 안 좋아해요.

정답 1) 여는 것 2) 하는 것 3) 다리는 것 4) 찍는 것

## 활동 ກິດຈະກຳ

〈보기〉처럼 친구하고 이야기해 보세요. ຈົ່ງສ້າງບົດສົນທະນາ ແລ້ວສົນທະນາກັບໝູ່ເພື່ອນຄືກັບບົດຕົວຢ່າງ.

보기 ຕົວຢ່າງ

가: 투안 씨는 집안일 하는 것을 좋아해요? ຕວນ ມັກເຮັດວຽກເຮືອນບໍ່?
나: 네, 좋아해요. ເຈົ້າ, ຂ້ອຍມັກເຮັດວຽກເຮືອນ.
가: 무슨 일 하는 것을 가장 좋아해요? ລາວມັກເຮັດວຽກຫຍັງຫຼາຍທີ່ສຸດ?
나: 정리하는 것을 가장 좋아해요. ວຽກທີ່ມັກຫຼາຍທີ່ສຸດ ແມ່ນມ້ຽນຈັດແຈງເຄື່ອງ.

보기 ຕົວຢ່າງ

가: 리한 씨는 집안일 하는 것을 좋아해요? ຣິຮັນ ມັກເຮັດວຽກເຮືອນບໍ່?
나: 아니요, 안 좋아해요. ບໍ່, ລາວບໍ່ມັກເຮັດວຽກເຮືອນ.
가: 무슨 일 하는 것을 가장 안 좋아해요? ລາວບໍ່ມັກເຮັດວຽກຫຍັງຫຼາຍທີ່ສຸດບໍ່?
나: 요리하는 것을 가장 안 좋아해요. ວຽກທີ່ລາວບໍ່ມັກທີ່ສຸດ ແມ່ນແຕ່ງກິນ.

| | 이름 ຊື່ | 집안일 ວຽກເຮືອນ |
|---|---|---|
| 보기 ຕົວຢ່າງ | 투안 ຕວນ | 정리하는 것을 가장 좋아해요.<br>ສິ່ງທີ່ມັກທີ່ສຸດຄື ການມ້ຽນຈັດແຈງເຄື່ອງ. |
| | 리한 ຣິຮັນ | 요리하는 것을 가장 안 좋아해요.<br>ສິ່ງທີ່ບໍ່ມັກທີ່ສຸດ ກໍຄືການແຕ່ງກິນ. |
| 1) | | |
| 2) | | |
| 3) | | |
| 4) | | |
| 5) | | |



## 정보 ຂໍ້ມູນທົ່ວໄປ

# 쓰레기 종량제와 분리수거

ປະເພດຂີ້ເຫຍື້ອ ແລະ ການແຍກຂີ້ເຫຍື້ອ

### 쓰레기 종량제 ປະເພດຂີ້ເຫຍື້ອ

쓰레기의 실제 배출량에 따라 수수료를 다르게 부과하는 제도입니다. 한국에서는 지정된 규격의 쓰레기봉투를 판매하고 그 봉투에만 쓰레기를 담아서 버리도록 하고 있습니다. 그리고 재활용이 가능한 쓰레기는 제외하여 재활용률을 높이는 효과가 있습니다. 1995년부터 전국적으로 실시되었습니다.

ການເສຍຄ່າຂອງຂີ້ເຫຍື້ອ ກໍຈະແບ່ງຕາມແຕ່ລະປະເພດແຕກຕ່າງກັນ, ໃນປະເທດເກົາຫຼີ ກໍຈະຂາຍຖົງຂີ້ເຫຍື້ອແຕ່ລະປະເພດ ແລະ ກໍຈະຖິ້ມຂີ້ເຫຍື້ອໃສ່ຕາມ ແຕ່ລະປະເພດຂອງຂີ້ເຫຍື້ອ. ສະນັ້ນ, ຂີ້ເຫຍື້ອທີ່ສາມາດນໍາໄປໃຊ້ຄືນໃໝ່ໄດ້ ຈະມີຜົນປະໂຫຍດຫຼາຍ ເຊິ່ງການ ເລີ່ມແຍກຂີ້ເຫຍື້ອນີ້ແມ່ນເລີ່ມແຕ່ປີ 1995 ເປັນຕົ້ນມາ.

### 쓰레기 분리수거 ການແຍກປະເພດຂີ້ເຫຍື້ອ

<table>
<tr><td>일반 쓰레기<br>ຂີ້ເຫຍື້ອທົ່ວໄປ</td><td></td><td rowspan="2">· 정해진 쓰레기봉투에 넣어야 합니다.<br>ຕ້ອງຖິ້ມຂີ້ເຫຍື້ອ ໃສ່ຖົງຂີ້ເຫຍື້ອທີ່ກໍານົດໄວ້.<br>· 정해진 장소에 버려야 합니다.<br>ຕ້ອງຖິ້ມຂີ້ເຫຍື້ອໃສ່ສະຖານທີ່ ທີ່ກໍານົດໄວ້.<br>· 음식물 쓰레기는 물기를 빼고 버려야 합니다.<br>ຂີ້ເຫຍື້ອປະເພດເສດອາຫານຕ້ອງຖອກນໍ້າອອກກ່ອນ ຈຶ່ງຖິ້ມ.<br>· 쓰레기봉투는 가까운 슈퍼마켓에서 살 수 있습니다.<br>ຖົງຂີ້ເຫຍື້ອສາມາດຊື້ໄດ້ຕາມຮ້ານຂາຍເຄື່ອງໃກ້ຄຽງ ທີ່ໃກ້ເຮືອນທ່ານ.<br>· 쓰레기봉투의 종류와 가격<br>ປະເພດ ແລະ ລາຄາຖົງຂີ້ເຫຍື້ອ<br>- 일반 쓰레기봉투와 음식물 쓰레기봉투가 다릅니다.<br>ຖົງຂີ້ເຫຍື້ອທົ່ວໄປ ແລະ ຖົງຂີ້ເຫຍື້ອເສດອາຫານຈະຕ່າງກັນ.<br>- 규격별로 있습니다. (5ℓ, 10ℓ, 20ℓ, 30ℓ, 50ℓ, 75ℓ)<br>ມີປະລິມານ, ມາດຕະຖານຂອງມັນ. (5 ລິດ, 10 ລິດ, 20 ລິດ, 30 ລິດ, 50 ລິດ, 75 ລິດ)<br>- 지역별로 쓰레기봉투의 가격이 다릅니다.<br>ແຕ່ລະເຂດລາຄາຖົງຂີ້ເຫຍື້ອກໍຕ່າງກັນ.</td></tr>
<tr><td>음식물 쓰레기<br>ຂີ້ເຫຍື້ອປະເພດ<br>ເສດອາຫານ</td><td></td></tr>
<tr><td>대형 쓰레기<br>ຖົງຂີ້ເຫຍື້ອຂະ<br>ໜາດໃຫຍ່</td><td></td><td>· 대형 쓰레기에 스티커를 붙여야 합니다.<br>ຖົງຂີ້ເຫຍື້ອຂະໜາດໃຫຍ່ ຈະຕ້ອງຕິດສະຕິກເກີໃສ່.<br>· 스티커는 주민자치센터에서 살 수 있습니다.<br>ສະຕິກເກີ ແມ່ນສາມາດຊື້ໄດ້ທີ່ສູນປົກຄອງຊຸມຊົນ.<br>· 스티커는 인터넷으로도 살 수 있습니다.<br>ສະຕິກເກີ ກໍສາມາດຊື້ໄດ້ທາງອິນເຕີເນັດ.</td></tr>
<tr><td>재활용 쓰레기<br>ຂີ້ເຫຍື້ອທີ່ນໍາ<br>ໃຊ້ຄືນໄດ້</td><td></td><td>· 재활용 쓰레기는 분리해서 버려야 합니다.<br>ຂີ້ເຫຍື້ອທີ່ສາມາດນໍາໄປໃຊ້ຄືນໄດ້ ເວລາຖິ້ມກໍຈະຕ້ອງໄດ້ແຍກຖິ້ມ.<br>· 종이류, 빈병류, 플라스틱류가 있습니다.<br>ຈະມີຂີ້ເຫຍື້ອປະເພດເຈ້ຍ, ກ່ອງເປົ່າ, ຢາງ.</td></tr>
<tr><td>헌 옷,<br>형광등,<br>건전지<br>ເຄື່ອງເກົ່າ, ຫຼອດໄຟຟ້າ,<br>ຖ່ານໄຟສາຍ.</td><td></td><td>· 헌 옷은 헌 옷 수거함에 넣어야 합니다.<br>ເຄື່ອງເກົ່າຕ້ອງຖິ້ມໃສ່ຕູ້ເກັບເຄື່ອງເກົ່າ.<br>· 형광등, 건전지는 전용 수거함에 넣어야 합니다.<br>ຫຼອດໄຟຟ້າ, ຖ່ານໄຟສາຍ ຕ້ອງຖິ້ມໃສ່ສະເພາະຕູ້ເກັບຂີ້ເຫຍື້ອຫຼອດໄຟຟ້າ ແລະ ຖ່ານໄຟສາຍ.</td></tr>
</table>



# EPS-TOPIK 듣기 ພາກຟັງ EPS-TOPIK



ສຳລັບຂໍ້ທີ 1 ແລະ 2 ແມ່ນການຕື່ມຄຳສັບທີ່ເຫັນວ່າເໝາະສົມກັບຮູບພາບ. ຈົ່ງຟັງ ແລະ ເລືອກເອົາຄຳຕອບທີ່ຖືກຕ້ອງ.

[1~2] 다음 그림을 보고 알맞은 것을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

Track 66

1. ① ② ③ ④

2. ① ② ③ ④



ຕໍ່ໄປນີ້ ເປັນການຟັງຄຳຖາມ ແລະ ເລືອກເອົາຄຳຕອບທີ່ເໝາະສົມ. ກ່ອນຈະຟັງຄຳຖາມ ຈົ່ງກວດເບິ່ງເນື້ອໃນຂອງຄຳຕອບອີກຄັ້ງໜຶ່ງສາກ່ອນ.

[3~5] 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

3. ① 날씨가 흐려서 기분이 안 좋아요.
② 너무 달아서 저는 안 먹고 싶어요.
③ 약속 시간에 늦어서 너무 미안해요.
④ 청소를 너무 안 해서 방이 더러워요.

4. ① 괜찮아요. 지난번에 한 번 봤어요.
② 싫어요. 저는 운동을 별로 안 좋아해요.
③ 죄송해요. 제가 좀 바빠서 내일은 어려워요.
④ 미안해요. 무릎이 안 좋아서 닦는 것이 힘들어요.

5. ① 좋아요. 저하고 같이 걸어요.
② 글쎄요. 저는 아까 걸었어요.
③ 그래요. 제가 바로 걸어 줄게요.
④ 맞아요. 내일 저녁에 걷을 거예요.



## 듣기 대본 ເນື້ອໃນບົດຟັງ

1. ① 여: 쓸어요. ກວາດ (ກວາດເຮືອນ, ກວດຂີ້ເຫຍື້ອ).
   ② 여: 닦아요. ເຊັດ.
   ③ 여: 돌려요. ປັ່ນ.
   ④ 여: 버려요. ຖິ້ມ.
2. ① 남: 장을 봐요. ອອກຕະຫຼາດ.
   ② 남: 밥을 해요. ຫຸງເຂົ້າ, ໜຶ້ງເຂົ້າ.
   ③ 남: 음식을 만들어요. ແຕ່ງກິນ.
   ④ 남: 설거지를 해요. ລ້າງຖ້ວຍ.
3. 여: 방이 너무 더럽네요. ຫ້ອງເປິເປື້ອນຫຼາຍ.
4. 남: 투안 씨는 방을 닦을래요? ຕວນ ອານາໄມຫ້ອງນອນບໍ?
5. 여: 제 빨래 좀 지금 걷어 주세요. ກະລຸນາເກັບເຄື່ອງຂອງຂ້ອຍແດ່ ດຽວນີ້ເດີ.

정답 1. ④ 2. ④ 3. ④ 4. ④ 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ

L-20

1. 이것은 무엇입니까? ອັນນີ້ແມ່ນຫຍັງ?



① ② ③ ④

2. 이 사람은 무엇을 하고 있습니까? ຄົນຜູ້ນີ້ກຳລັງເຮັດຫຍັງ?



① ② ③ ④

## 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. ① 밥솥입니다. ໝໍ້ຫຸງເຂົ້າ.
   ② 냄비입니다. ໝໍ້ແກງ.
   ③ 빗자루입니다. ຍູກວາດ.
   ④ 휴지통입니다. ຖັງຂີ້ເຫຍື້ອ (ເຈ້ຍອານາໄມ).
2. ① 옷을 개고 있어요. ກຳລັງພັບເຄື່ອງ.
   ② 옷을 다리고 있어요. ກຳລັງລີດເຄື່ອງ.
   ③ 빨래를 널고 있어요. ກຳລັງຕາກເຄື່ອງ.
   ④ 세탁기를 돌리고 있어요. ກຳລັງປັ່ນເຄື່ອງ.

정답 1. ④ 2. ①



# EPS-TOPIK 읽기 ພາກອ່ານ EPS-TOPIK



ສຳລັບ 1 ແລະ 2 ແມ່ນເປັນຄຳຖາມກ່ຽວກັບ ການເບິ່ງຮູບພາບ ແລ້ວເລືອກເອົາປະໂຫຍກ ທີ່ຖືກຕ້ອງ. ຈົ່ງເລືອກເອົາປະໂຫຍກທີ່ເໝາະສົມກັບຮູບພາບ.

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1.



① 닦아요. ② 쓸어요.
③ 씻어요. ④ 빨아요.

2.



① 장을 봐요. ② 빨래를 해요.
③ 창문을 열어요. ④ 반찬을 만들어요.



ຈົ່ງອ່ານບົດສົນທະນາ ຫຼື ປະໂຫຍກຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ ແລະ ຖືກຕ້ອງທີ່ສຸດໃສ່ບ່ອນຫວ່າງ. ຈົ່ງຄິດທົບທວນຄືນສິ່ງທີ່ຮຽນມາ ແລ້ວຕອບຄຳຖາມລຸ່ມນີ້ລອງເບິ່ງ.

[3~5] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.

가: 방이 정말 ______________. ຫ້ອງເປິເປື້ອນທີ່ສຸດ.

나: 요즘 청소를 너무 안 해서 그래요. ຊ່ວງນີ້ ບໍ່ໄດ້ອະນາໄມ ເລີຍເປັນແບບນີ້.

① 바빠요 ② 깨끗해요 ③ 가까워요 ④ 지저분해요

4.

가: 우리 같이 작업장을 청소할까요? ພວກເຮົາມາອະນາໄມສະຖານທີ່ເຮັດວຽກນຳກັນບໍ?

나: 좋아요. 제가 ______________. ດີ, ຂ້ອຍຈະປັດກວາດ ສະຖານທີ່ເຮັດວຽກ.

① 작업장을 쓸게요 ② 작업장이 넓어요
③ 작업장에 없어요 ④ 작업장을 안 볼게요

5.

투안 씨, 저 리한이에요. 부탁이 있어요. 제가 오늘 아침에 옥상에 제 바지를 널었어요. 그런데 저는 오늘 기숙사에 못 들어가요 . 투안 씨가 오늘 저녁에 제 바지를 좀 ______________ 주세요. 고마워요.

ຕວນ ຂ້ອຍຊື່ວ່າ ຣີຮັນ, ມີເລື່ອງຢາກຂໍຮ້ອງ, ມື້ນີ້ຕອນເຊົ້າ ຂ້ອຍໄດ້ຕາກໂສ້ງໄວ້ດາດຟ້າ, ແຕ່ວ່າມື້ນີ້ ຂ້ອຍບໍ່ໄດ້ເຂົ້າໄປ ຫໍພັກເຫື່ອ, ຕອນແລງ ຕວນຊ່ວຍກູ້ໂສ້ງໃຫ້ຂ້ອຍແດ່ເດີ, ຂອບໃຈຫຼາຍໆ.

① 해 ② 걷어 ③ 닦아 ④ 만들어

정답 1. ① 2. ③ 3. ④ 4. ① 5. ②



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 작업장에 먼지가 많아서 ________을/를 했습니다. 바닥도 닦고 환기도 시켰습니다.
   ຢູ່ບ່ອນເຮັດວຽກ, ຍ້ອນມີຂີ້ຝຸ່ນຫຼາຍ ຈຶ່ງໄດ້ທຳຄວາມສະອາດ. ທຳຄວາມສະອາດພື້ນ ແລະ ລະບາຍອາກາດອອກ.

   ① 공부　② 청소　③ 운동　④ 노래

2. 청소를 안 해서 방이 너무 ________. 그래서 오늘 투안 씨와 함께 방을 쓸고 먼지를 닦았습니다.
   ບໍ່ໄດ້ທຳຄວາມສະອາດ ເຮັດໃຫ້ຫ້ອງເປິເປື້ອນ. ສະນັ້ນ ຂ້ອຍ ແລະ ຕວນ ໄດ້ພ້ອມກັນ ປັດກວາດຫ້ອງ ແລະ ທຳ ຄວາມສະອາດຂີ້ຝຸ່ນ.

   ① 더러웠습니다　② 비슷했습니다
   ③ 따뜻했습니다　④ 단정했습니다

3. 많은 사람들이 이용하는 공공장소에서는 예의를 지켜야 합니다. 함부로 쓰레기를 ________ 큰 소리로 떠들면 안 됩니다.
   ຄົນຈຳນວນຫຼາຍ ແມ່ນຕ້ອງໄດ້ມີມາລະຍາດ ໃນການນຳໃຊ້ສະຖານທີ່ສາທາລະນະ. ເປັນຕົ້ນແມ່ນ ການຖິ້ມຂີ້ເຫຍື້ອຊະຊາຍ ແລະ ໃຊ້ສຽງດັງ ແມ່ນບໍ່ໄດ້.

   ① 떨거나　② 쓸거나
   ③ 버리거나　④ 정리하거나

정답 1. ② 2. ① 3. ③



**발음** ການອອກສຽງ  P-08

### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ພະຍັນຊະນະທີ່ອອກສຽງ ໃນພະຍັນສຸດທ້າຍຂອງພາສາເກົາຫຼີ (ຕົວສະກົດ) ແມ່ນມີໜ້ອຍ. ໃນກໍລະນີນີ້ ແມ່ນມີພຽງ ພະຍັນຊະນະ 7 ຕົວທີ່ອອກສຽງໄດ້. ສຳລັບກໍລະນີ ສຽງສັ້ນເຊັ່ນ: ‘을’ ສຽງ ‘ㄹ’ ແມ່ນຈະອອກ ສຽງເປັນສຽງ [l].

(1) 물, 길, 달, 얼굴
(2) 서울, 내일, 하늘, 거울
(3) 물 좀 주세요.
(4) 내일 봐요.



# 상 차리는 것을 도와줄까요?

ເຈົ້າຕ້ອງການໃຫ້ຊ່ວຍຈັດສະຖານທີ່ບໍ?

**학습 안내**
ຄຳແນະນຳ ໃນການຮຽນ

- □ ຈຸດປະສົງໃນການຮຽນ — ການອະທິບາຍ, ການຂໍອະນຸຍາດ
- □ ໄວຍາກອນ — -는데/(으)ㄴ데, -(으)ㄹ까요
- □ ຄຳສັບ ແລະ ສຳນວນຄຳເວົ້າ — ການນັດໝາຍ, ການເຊື້ອເຊີນ
- □ ຂໍ້ມູນກ່ຽວກັບວັດທະນາທຳ — ຂອງຂວັນຂຶ້ນເຮືອນໃໝ່



## 대화 1 ບົດສົນທະນາ 1

Track 67



ອາດິດ ມີນັດກັບຫົວໜ້າ. ແຕ່ວ່າ ຫົວໜ້າອອກໄປນອກໜ້ອຍໜຶ່ງ. ຕໍ່ໄປແມ່ນ ບົດສົນທະນາ ລະຫວ່າງອາດິດ ແລະ ເລຂາ. ກ່ອນອື່ນ ຈົ່ງຟັງບົດສົນທະນາ 2 ຄັ້ງ ແລ້ວເວົ້າຕາມ.

비서 어떻게 오셨어요? ມີຫຍັງໃຫ້ຊ່ວຍບໍ?

아딧 저는 한국건설 아딧이라고 합니다.
ຂ້າພະເຈົ້າຊື່ວ່າ ອາດິດ ມາຈາກ ບໍລິສັດກໍ່ສ້າງເກົາຫຼີ.
사장님하고 2시에 약속이 있어서 왔습니다.
ຂ້ອຍມານີ້ຍ້ອນມີນັດກັບ ຫົວໜ້າເວລາ 2ໂມງ.

비서 사장님이 잠깐 나가셨는데 제가 전화해 볼게요.
ຫົວໜ້າ ອອກໄປນອກໜ້ອຍໜຶ່ງ, ດຽວຂ້ອຍຈະລອງໂທຫາເບິ່ງ.
(통화 후) (ຫຼັງຈາກໂທລະສັບແລ້ວ)

비서 곧 오실 거예요.
ຫົວຫນ້າຈະເຂົ້າມາໃນໄວໆນີ້.
안에 들어가서 기다리세요.
ເຊີນເຂົ້າໄປຖ້າຢູ່ທາງດ້ານໃນໄດ້ເລີຍ.

아딧 아니에요. 여기에서 기다릴게요.
ບໍ່ເປັນຫຍັງ. ຖ້າຢູ່ນີ້ກໍໄດ້.

> **-아서/어서**
> ໃຊ້ເພື່ອບົ່ງບອກເຖິງລຳດັບຂອງການກະທຳ. ສະແດງໃຫ້ເຫັນສະຖານະການຕໍ່ໄປຂອງບຸກຄົນດຽວກັນ, ສະຖານທີ່ ຫຼື ສິ່ງຂອງ ດຽວກັນ.
> - 친구를 만나서 영화를 봤어요.
>   ຂ້ອຍພົບໝູ່ເພື່ອນ ແລ້ວໄດ້ໄປເບິ່ງໜັງ.
> - 집에 가서 저녁을 먹고 쉬었어요.
>   ຂ້ອຍກັບບ້ານ, ກິນເຂົ້າແລງ ແລ້ວກໍພັກຜ່ອນ.

> **(이)라고 하다**
> ເປັນສຳນວນທີ່ໃຊ້ໃນເວລາແນະນຳຕົນເອງ ຫຼື ແນະນຳຄົນອື່ນ.
> - 저는 투안이라고 해요.
>   ຂ້ອຍຊື່ວ່າຕວນ.
> - 이 사람은 수루라고 합니다.
>   ຜູ້ນີ້ ແມ່ນຊູຣຸ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 아딧 씨는 왜 여기에 왔어요? ເປັນຫຍັງ ອາດິດ ຈຶ່ງມາບ່ອນນີ້?
2. 사장님은 어디에 계세요? ຫົວໜ້າ ໄປໃສ?

정답 1. 사장님하고 2시에 약속이 있어서 왔어요. 2. 사장님은 잠깐 밖에 나가셨어요.





## 어휘 1 ຄຳສັບ 1 약속 ການສັນຍາ, ການນັດໝາຍ



ທຸກຄົນ, ຖ້າໃຫ້ຄຳສັນຍາແລ້ວ ຮັກສາຄຳສັນຍາໄດ້ດີບໍ? ເຮົາມາລອງເບິ່ງຄຳສັບທີ່ໃຊ້ກ່ຽວກັບຄຳສັນຍາ ຫຼື ການນັດໝາຍເບິ່ງເນາະ.




약속을 하다
ສັນຍາ, ນັດໝາຍ



약속을 지키다
ຮັກສາສັນຍາ




약속을 어기다
ບໍ່ຮັກສາສັນຍາ



약속에 늦다
ມາຊ້າ ບໍ່ຕາມທີ່ນັດ
(ບໍ່ມາຕາມເວລານັດໝາຍ)



방문을 하다
ຢ້ຽມຢາມ



안내하다
ແນະນຳ (ໃຫ້ຂໍ້ມູນ)



안내를 받다
ໄດ້ຮັບຂໍ້ມູນ



기다리다
ລໍຖ້າ

- 두 시에 아딧 씨를 만났어요. 아딧 씨는 **약속을** 잘 **지켜요**.
  ຂ້ອຍໄດ້ພົບກັບ ທ່ານ ອາດິດ ເວລາ 2 ໂມງ. ທ່ານ ອາດິດເປັນຄົນຮັກສາສັນຍາດີ.
- 흐엉 씨는 약속 장소에 안 나왔어요. **약속을 어겼어요**. ເຮືອງ ບໍ່ໄດ້ມາຕາມສະຖານທີ່ ທີ່ໄດ້ນັດໝາຍໄວ້. ລາວບໍ່ໄດ້ຮັກສາສັນຍາ.
- 버스를 놓쳐서 **약속에 늦었어요**. ຂ້ອຍໄປບໍ່ທັນເວລາລົດອອກ ເລີຍເຮັດໃຫ້ມາຮອດຊ້າ.
- 한 시간 동안 여자 친구를 **기다렸지만** 안 왔어요. ຂ້ອຍໄດ້ຖ້າແຟນເປັນເວລາ 1 ຊົ່ວໂມງ ແຕ່ວ່າ ແຟນຂ້ອຍບໍ່ (ໄດ້) ມາ.



ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

1. 그림에 맞는 표현을 〈보기〉에서 골라 넣으세요.

ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




1) 



2) 



3) 



4) 

보기: 약속을 하다 　 기다리다 　 안내를 하다 　 방문하다

정답 1) 약속을 하다 2) 방문하다 3) 안내를 하다 4) 기다리다

# 문법 1 ໄວຍາກອນ 1 -는데/(으)ㄴ데




'-는데/(으)ㄴ데' ມັນຖືກໃຊ້ຕື່ມທ້າຍຄຳກຳມະ, ຄຳຄຸນນາມເພື່ອເຊື່ອມຕໍ່ເນື້ອໃນຂອງສະຖານະການກ່ອນໜ້ານີ້. ກໍລະນີ '있다/없다' ແມ່ນໄປກັບ '-는데'.

| 동사(ຄຳກຳມະ) | 형용사(ຄຳຄຸນນາມ) | | 명사(ຄຳນາມ) |
|---|---|---|---|
| -는데 | 자음(ພະຍັນຊະນະ) → -은데 | 모음(ສະຫຼະ) → -ㄴ데 | 인데 |
| 먹다 → 먹**는데**<br>오다 → 오**는데** | 많다 → 많**은데** | 크다 → **큰데** | 사람 → 사람**인데**<br>친구 → 친구**인데** |

- 가: 밖에 비가 많이 **오는데** 창문 좀 닫아 주실래요? ຢູ່ນອກຝົນຕົກຫຼາຍ ອັດປະຕູປ່ອງຢ້ຽມໃຫ້ແດ່.
  나: 네, 그럴게요. ເຈົ້າໆ, ຊິອັດໃຫ້.
- 가: 노이 씨, 날씨도 **좋은데** 우리 오늘 놀러 갈까요? ນ້ອຍ, ອາກາດດີໆ ມື້ນີ້ ພວກເຮົາໄປເລາະຫຼິ້ນນຳກັນບໍ?
  나: 좋아요. 어디에 가고 싶어요? ຕົກລົງ, (ເຈົ້າ) ຢາກໄປໃສ?
- 가: 피자가 **맛있는데** 더 드실래요? ພິດຊາແຊບໆ ຊິກິນອີກບໍ?
  나: 네, 더 주세요. ເອີໆ, ຂໍຕື່ມອີກແດ່.



## 대조적 정보 ການປຽບທຽບ

-는데 ແມ່ນຮູບແບບທີ່ໃຊ້ເພື່ອເຊື່ອມຕໍ່ປະໂຫຍກຫຼັງໃສ່ກັບເນື້ອໃນຂອງສະຖານະການທີ່ໄດ້ເວົ້າເກີ່ນມາກ່ອນໜ້ານີ້ ເຊິ່ງໃນປະໂຫຍກຫຼັງອາດຈະເປັນຄຳຊັກຊວນ, ຄຳແນະນຳອື່ນໆເປັນຕົ້ນ. ແຕ່ໃນພາສາລາວແມ່ນບໍ່ຈຳເປັນຕ້ອງໃສ່ຄຳເຊື່ອມຫຍັງໃສ່ ມີແຕ່ເວົ້າປະໂຫຍກໜ້າແລ້ວກໍ່ເວົ້າປະໂຫຍກຫຼັງທີ່ເຮົາຕອ້ງການຈະເວົ້າໃສ່ເລີຍ.

- **더운데** 창문을 열까요? ຮ້ອນເວີ່ຍ, ເປີດປະຕູປ່ອງຢ້ຽມບໍ?
- 제 오빠는 **학생인데** 축구를 아주 잘해요. ອ້າຍຂອງຂ້ອຍເປັນນັກຮຽນ, ລາວເຕະບານເກັ່ງຫຼາຍ.



ເຂົ້າໃຈການໃຊ້ '-는데/(으)ㄴ데' ແລ້ວບໍ? ສະນັ້ນ ຈົ່ງຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ ດ້ວຍສຳນວນທີ່ເໝາະສົມຈາກກອບ.

**2. 빈칸에 맞는 표현을 〈보기〉에서 골라 '-는데/(으)ㄴ데'를 사용해서 대화를 완성하세요.**
ຈົ່ງເຮັດໃຫ້ບົດສົນທະນາໃຫ້ຄົບຖ້ວນ ໂດຍການເລືອກເອົາສຳນວນທີ່ຖືກຕ້ອງຈາກ 〈 ກອບ 〉 ພ້ອມທັງນຳໃຊ້ -는데/(으)ㄴ데 ຕື່ມໃສ່ບ່ອນຫວ່າງ.




1) 가: 투안 씨, 시간이 있으면 이것 좀 가르쳐 주세요.
   ຕວນ, ຖ້າເຈົ້າມີເວລາ, ຊ່ວຍສອນອັນນີ້ໃຫ້ຂ້ອຍແນ່ໄດ້ບໍ?
   나: 지금은 시간이 ______________ 조금 이따 오세요.

2) 가: 모니카 씨, 마트에 ______________ 뭐 필요한 거 있어요?
   나: 그럼 우유 좀 사다 주세요. ຄັນຊັ້ນ ຊ່ວຍຊື້ນົມມາໃຫ້ຂ້ອຍແນ່.

3) 가: 우리 오늘 같이 청소해요. 방이 너무 더러워요.
   ມື້ນີ້ ພວກເຮົາທຳຄວາມສະອາດນຳກັນເນາະ. ຫ້ອງມັນເປື້ອນຫຼາຍ.
   나: 오늘은 좀 ______________ 내일 하면 안 돼요?

정답 1) 없는데 2) 가는데 3) 바쁜데



## 대화 2 ບົດສົນທະນາ 2

Track 68



ໂມນິກາໄດ້ຖືກເຊີນໄປເຮືອນຂອງ ໂຊຮີ. ແລະ ໄດ້ມອບຂອງຂວັນຂຶ້ນເຮືອນໃໝ່ໃຫ້ ໂຊ ຮີ. ທັງສອງຄົນສົນທະນາຫຍັງກັນ? ຈົ່ງຟັງບົດສົນທະນາ 2 ຄັ້ງ ແລ້ວລອງເວົ້າຕາມ ບົດສົນທະນາຄືກັບໂຊຮີ ແລະ ໂມນິກາ.

소 희 모니카 씨, 어서 와요.
ໂມນິກາ, ຍິນດີຕ້ອນຮັບ.

모니카 네, 초대해 주셔서 감사해요.
ເຈົ້າ, ຂອບໃຈທີ່ເຊີນເດີ.
집이 참 좋네요.
ເຮືອນ ດີ (ງາມ) ແທ້ໆເນາະ.

소 희 고마워요. 그런데 집 찾기가 어렵지 않았어요?
ຂອບໃຈ. ແຕ່ວ່າ ຊອກຫາທາງມາເຮືອນນີ້ບໍ່ຍາກບໍ?

모니카 아니에요. 금방 찾았어요.
ບໍ່, ໜ້ອຍດຽວ, ກໍຫາເຫັນແລ້ວ.
이건 집들이 선물이에요.
ນີ້ແມ່ນຂອງຂວັນຂຶ້ນເຮືອນໃໝ່.

소 희 뭘 이런 걸 준비했어요?
ເປັນຫຍັງຈຶ່ງກຽມເຄື່ອງມາໃຫ້ນໍາ? (ເວົ້າແບບເກງໃຈ)
어서 앉으세요.
ເຊີນນັ່ງເລີຍ.

모니카 상 차리는 것을 좀 도와줄까요?
ໃຫ້ຂ້ອຍຈັດສະຖານທີ່ຊ່ວຍບໍ?

소 희 아니에요. 다 됐어요.
ບໍ່ໆ, ເຮັດແລ້ວໝົດແລ້ວ.

> **-기가**
> ແມ່ນການສະແດງເຖິງຄວາມຄິດຂອງບຸກຄົນໃດໜຶ່ງເວລາທີ່ ລົງທ້າຍດ້ວຍ '좋다(ດີ), 어렵다(ຍາກ), 쉽다(ງ່າຍ) '. ສາມາດໃຊ້ '-는 것이' ແທນ '-기가' ກໍໄດ້.
> - 이곳은 가게들이 많아서 쇼핑하기가 좋아요.
>   ຢູ່ບ່ອນນີ້ມີຮ້ານຄ້າຫຼາຍ ຈຶ່ງເຮັດໃຫ້ການຊື້ເຄື່ອງສະດວກສະບາຍ.
> - 한국어를 배우기가 쉽지 않아요.
>   ການຮຽນພາສາເກົາຫຼີ ແມ່ນບໍ່ງ່າຍ.

> **금방** ໄວໆນີ້, ທາກໍ່, ໜ້ອຍດຽວ
> 1. ເວລາທີ່ໃຊ້ແມ່ນສັ້ນໆ (ໃຊ້ເວລາໜ້ອຍດຽວ)
>    - 이 일은 어렵지 않아서 금방 끝났어요.
>      ວຽກນີ້ແມ່ນບໍ່ຍາກ ແປັບດຽວ (ໃຊ້ເວລາໜ້ອຍດຽວ) ກໍເຮັດແລ້ວ.
> 2. ບໍ່ດົນມານີ້ (ໃນເວລາສັ້ນໆ)
>    - 가: 이것 좀 드세요.
>      ກິນອັນນີ້ໜ້ອຍໜຶ່ງແນ່.
>      나: 아니에요. 금방 저녁을 먹고 왔어요.
>      ບໍ່ເປັນຫຍັງ, ມື້ກີ້ ຂ້ອຍຫາກໍກິນເຂົ້າແລງແລ້ວຄ່ອຍອອກມາ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 모니카 씨는 어디를 방문했어요? ໂມນິກາ ໄດ້ໄປຢ້ຽມຢາມບ່ອນໃດ?
2. 모니카 씨는 무엇을 준비했어요? ໂມນິກາ ໄດ້ກະກຽມຫຍັງແດ່?

정답 1. 소희 집을 방문했어요. 2. 집들이 선물을 준비했어요.



## 어휘 2 ຄຳສັບ 2 — 초대 ການເຊີນ



ລອງມາເບິ່ງວ່າສຳນວນທີ່ກ່ຽວກັບການເຊີນມີຫຍັງແດ່.



초대하다
ເຊີນ



초대를 받다
ໄດ້ຮັບເຊີນ, ຖືກເຊີນ



선물을 준비하다
ກະກຽມຂອງຂວັນ



집을 찾다
ຊອກຫາເຮືອນ




마중 나가다
ອອກໄປຮັບ




음식을 장만하다
ກຽມອາຫານ

상을 차리다
ຈັດສະຖານທີ່ (ຈັດໂຕະຈັດຕັ່ງ)



상을 치우다
ເກັບມ້ຽນສະຖານທີ່
(ມ້ຽນໂຕະມ້ຽນຕັ່ງ)



이야기를 나누다
ການສົນທະນາ,
ການແບ່ງປັນເລື່ອງລາວກັນ



배웅하다
ໄປສົ່ງ

- 우리 집에 친구를 **초대했어요**. 그리고 한국 **음식을 장만했어요**. ຂ້ອຍໄດ້ເຊີນໝູ່ມາເຮືອນ. ແລະ ຂ້ອຍກໍໄດ້ກະກຽມອາຫານເກົາຫຼີ.
- 우리는 함께 **상을 차렸어요**. 음식을 다 먹고 **상을 치웠어요**. ພວກເຮົາໄດ້ຈັດກຽມສະຖານທີ່ນຳກັນ. ເມື່ອຮັບປະທານອາຫານແລ້ວ ກໍໄດ້ເກັບມ້ຽນສະຖານທີ່.
- 나는 집들이에 **초대를 받았어요**. 그래서 **선물을 준비했어요**. ຂ້ອຍຖືກເຊີນໄປງານຂຶ້ນບ້ານໃໝ່. ສະນັ້ນ, ຂ້ອຍຈຶ່ງໄດ້ກະກຽມຂອງຂວັນ.



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요.
ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.



초대를 했어요.



1) 



2) 




3) 



초대를 받았어요.



4) 



5) 




6) 



보기

집을 찾다
이야기를 나누다
선물을 준비하다
마중 나가다
상을 차리다
음식을 장만하다

정답 1) 음식을 장만하다 2) 상을 차리다 3) 마중 나가다 4) 선물을 준비하다 5) 집을 찾다 6) 이야기를 나누다

## 문법 2 ໄວຍາກອນ 2 -(으)ㄹ까요




'-(으)ㄹ까요' ໃຊ້ໃນເວລາສະເໜີບາງສິ່ງຢ່າງຄືກັນກັບໄວຍາກອນກ່ອນໜ້ານີ້. ແຕ່ວ່າ ໃນກໍລະນີທີ່ປະທານ ປະໂຫຍກເປັນ '저(나)' ແມ່ນໃຊ້ຖາມເພື່ອຂໍອະນຸຍາດຈາກຜູ້ອື່ນ.

| 자음(ພະຍັນຊະນະ) → **-을까요** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-ㄹ까요** |
|---|---|
| 닫다 → 닫**을까요** | 준비하다 → 준비**할까요**<br>만들다 → 만**들까요** |

- 가: 제가 선물을 **준비할까요?** ໃຫ້ຂ້ອຍກຽມຂອງຂວັນບໍ?
  나: 네, 수미 씨가 선물을 사세요. 제가 케이크를 살게요. ຕົກລົງ, ຊຸມີ ຊື້ຂອງຂວັນເດີ. ຂ້ອຍຈະຊື້ເຄັກມາ.
- 가: 제가 창문을 **닫을까요?** ໃຫ້ຂ້ອຍອັດປະຕູປ່ອງຢ້ຽມບໍ?
  나: 네, 닫으세요. ເອີ, ອັດໃຫ້ແດ່.



### 비교해 보세요 ຈົ່ງປຽບທຽບລອງເບິ່ງ

✔ ລະຫວ່າງ **'-(으)ㄹ까요'** ກັບ **'-(으)ㄹ래요'**

'-(으)ㄹ까요' ກັບ '-(으)ㄹ래요' ໃຊ້ເປັນປະໂຫຍກຄຳຖາມເພື່ອແນະນຳ ຫຼື ຖາມຄວາມຄິດເຫັນຂອງຄົນອື່ນ. ໃນກໍລະນີນີ້ ປະທານຂອງປະໂຫຍກທີ່ໃຊ້ '-(으)ㄹ까요' ຕ້ອງເປັນບຸລຸດທີ 1; ແຕ່ '-(으)ㄹ래요' ໃຊ້ກັບປະທານປະໂຫຍກທີ່ເປັນບຸລຸດທີ 1 ບໍ່ໄດ້. ນອກນີ້ '-(으)ㄹ까요' ໃຊ້ໄດ້ແຕ່ປະໂຫຍກຄຳຖາມເທົ່ານັ້ນ. ແຕ່ '-(으)ㄹ래요' ໃຊ້ໄດ້ທັງໃນປະໂຫຍກບອກເລົ່າ.

- 제가 가져**올까요**?(O)　　제가 가져올래요?(X)
- 제가 할까요.(X)　　제가 **할래요**.(O)



ເຂົ້າໃຈການນຳໃຊ້ '-(으)ㄹ까요' ແລ້ວບໍ? ສະນັ້ນ ອ່ານບົດສົນທະນາ ແລ້ວເລືອກເອົາຄຳ ຕອບທີ່ຖືກຕ້ອງ.

2. 대화를 읽고 맞는 답을 고르세요. ຈົ່ງອ່ານບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

1) 가: 제가 도와줄까요? ໃຫ້ຂ້ອຍຊ່ວຍບໍ?
   나: ______________________.

   ① 네, 좀 도와주세요　　② 네, 혼자 할 수 있어요

2) 가: 제가 선물을 준비할까요? ຂ້ອຍຄວນກຽມຂອງຂວັນບໍ?
   나: ______________________.

   ① 아니요, 우리 같이 사요　　② 아니요, 선물 감사합니다

정답 1) ① 2) ①



## 활동 ກິດຈະກຳ



ລອງເປັນ '가' ແລະ '나' ແລ້ວສົນທະນາກັນຄືດັ່ງຕົວຢ່າງ.

〈보기〉처럼 이야기해 보세요. ຈົ່ງສ້າງບົດສົນທະນາຄືດັ່ງຕົວຢ່າງ.







사무실로 가다
ໄປຫ້ອງການ

가: 제가 사무실로 갈까요? ໃຫ້ຂ້ອຍໄປຫ້ອງການບໍ?

나: 네, 사무실로 오세요. ເຈົ້າ, ກະລຸນາມາທີ່ຫ້ອງການ.

1)



음식을 만들다
ເຮັດອາຫານ

2)



상을 차리다
ຈັດສະຖານທີ່

3)



선물을 준비하다
ກະກຽມຂອງຂວັນ

4)



상을 치우다
ເກັບມ້ຽນສະຖານທີ່

정답
1) 가: 제가 음식을 만들까요?
나: 네, 음식을 만드세요.
2) 가: 제가 상을 차릴까요?
나: 네, 상을 차리세요.
3) 가: 제가 선물을 준비할까요?
나: 네, 선물을 준비하세요.
4) 가: 제가 상을 치울까요?
나: 네, 상을 치우세요.



## 정보 ຂໍ້ມູນທົ່ວໄປ

# 집들이 선물 ຂອງຂວັນຂຶ້ນເຮືອນໃໝ່

한국 사람들은 결혼을 하거나 이사를 한 후에 가족이나 친구, 회사 동료를 집에 초대하는데 이것을 '집들이'라고 합니다. 집들이를 할 때는 친구들을 초대하고 그 사람들이 먹을 음식을 장만합니다. 그리고 초대 받은 사람은 집들이에 갈 때 선물을 준비합니다. 집들이 선물로는 세제나 휴지가 인기가 있습니다. 세제는 거품이 생기는 것처럼 좋은 일이 많이 생기고 부자가 되라는 의미가 있고, 휴지는 일이 술술 풀리라는 의미가 있습니다. 요즘은 초대한 사람에게 필요한 것을 물어보고 필요한 것을 사 주기도 합니다. 그리고 새 집에 어울리는 시계나 화분 같은 장식 용품도 선물로 인기가 많습니다. 특히 신혼부부들에게는 커피 잔이나 수저 세트 등 부부가 같이 쓸 수 있는 물건을 많이 선물합니다. 여러분도 집들이에 초대 받으면 이런 선물을 준비해 보세요.

ເວລາຫຼັງແຕ່ງງານ ຫຼື ຫຼັງຈາກຍ້າຍບ້ານໃໝ່ແລ້ວ, ຄົນເກົາຫຼີຈະມັກເຊີນ ຄອບຄົວ, ໝູ່ຄູ່ ຫຼື ເພື່ອນຮ່ວມງານມາເຮືອນຂອງຕົນເອງ ເຊິ່ງນີ້ເອີ້ນວ່າ '집들이' (ຫຼື ງານຂຶ້ນເຮືອນໃໝ່). ໃນເວລາຈັດງານຂຶ້ນເຮືອນໃໝ່ ເຈົ້າຂອງບ້ານຈະເຊີນໝູ່ຄູ່ມາເຮືອນ ແລະ ກະ ກຽມອາຫານ ແລະ ສຳລັບຜູ້ທີ່ຖືກເຊີນກໍຈະກະກຽມຂອງຂວັນ. ສຳລັບຂອງຂວັນຂຶ້ນເຮືອນໃໝ່ ຄົນສ່ວນຫຼາຍຈະນິຍົມເອົາແຟັບ ຫຼື ເຈ້ຍອະນາໄມໃຫ້. ສຳລັບແຟັບ ແມ່ນປຽບທຽບກັບຟອງຂອງແຟັບທີ່ເປັນຟອງອອກມາ ມີຄວາມໝາຍວ່າ ຂໍໃຫ້ຮັ່ງມີລ້ຳ ລວຍ ແລະ ສຳລັບເຈ້ຍອະນາໄມນັ້ນ ມີຄວາມໝາຍວ່າຂໍໃຫ້ວຽກງານຕ່າງໆລາບລື່ນ. ນອກຈາກນີ້ ໃນປະຈຸບັນ ຜູ້ທີ່ຖືກ ເຊີນຍັງຈະຖາມຜູ້ເຊີນວ່າ ມີຄວາມຕ້ອງການສິ່ງໃດ ແລ້ວກໍຊື້ສິ່ງນັ້ນໃຫ້ກໍມີ. ການໃຫ້ສິ່ງຂອງເພື່ອປະດັບເຮືອນ ເຊັ່ນ: ໂມງ ຫຼື ໂຖດອກໄມ້ ທີ່ເຫັນວ່າເໝາະສົມກັບເຮືອນໃໝ່ ກໍເປັນທີ່ນິຍົມຫຼາຍເຊັ່ນດຽວກັນ. ສຳລັບຄູ່ສ້າງຄອບຄົວໃໝ່ ຈອກກາເຟ, ຊຸດບ່ວງ ໄມ້ຖູ່ ກໍນິຍົມເອົາມາໃຫ້ເປັນຂອງຂວັນ. ທຸກຄົນກໍເຊັ່ນດຽວກັນ, ຖ້າຖືກເຊີນໄປຂຶ້ນເຮືອນໃໝ່ ກໍລອງກະກຽມຂອງຂວັນແບບນີ້ເບິ່ງ.




세제 ແຟັບ | 휴지 ເຈ້ຍອະນາໄມ | 화분 ໂຖດອກໄມ້

커피 잔 ຈອກກາເຟ | 수저 ບ່ວງໄມ້ຖູ່ | 시계 ໂມງ



### 내용 확인 ກວດຄືນເນື້ອໃນ

✚ 빈칸에 알맞은 말을 쓰세요. ຈົ່ງຂຽນຄຳເວົ້າທີ່ເໝາະສົມໃສ່ບ່ອນຫວ່າງ.

1. 이사를 한 후에 가족, 친구, 회사 동료를 집에 초대하는 것을 ☐☐☐ (이)라고 합니다.
   ເມື່ອຍ້າຍບ້ານໃໝ່ ແລ້ວເຊີນ ຄອບຄົວ, ໝູ່ ແລະ ເພື່ອຮ່ວມງານມາເຮືອນ ແມ່ນເອີ້ນວ່າ ງານຂຶ້ນເຮືອນໃໝ່.

2. 집들이 선물로 ☐☐ 은/는 거품이 생기는 것처럼 좋은 일이 많이 생기고 부자가 되라는 의미가 있습니다.
   ການໃຫ້ ແຟັບ ເປັນຂອງຂວັນຂຶ້ນເຮືອນໃໝ່ ແມ່ນປຽບຄືກັບການເກີດ ຟອງຂອງແຟັບ ທີ່ໝາຍຄວາມວ່າ ຂໍໃຫ້ລ້ຳລວຍ ເປັນເສດຖີ.

정답 1. 집들이 2. 세제



## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ຫາ 3 ແມ່ນຄຳຖາມກ່ຽວກັບການຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.
ຈົ່ງລອງກວດເບິ່ງເນື້ອໃນຂອງຄຳຕອບອີກເທື່ອໜຶ່ງກ່ອນ ແລ້ວຈຶ່ງຟັງຄຳຖາມ.

[1~3] 질문을 듣고 알맞은 대답을 고르십시오.




ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

1. ① 약속에 늦었어요.
   ② 안내해 드리세요.
   ③ 방문을 하려고 해요.
   ④ 사장님하고 약속을 했어요.

2. ① 네, 제가 선물을 샀어요.
   ② 네, 꽃이 예뻐서 샀어요.
   ③ 아니요, 우리 같이 사러 가요.
   ④ 아니요, 백화점은 너무 비싸요.

3. ① 네, 저도 초대를 받았어요.
   ② 네, 약속이 있어서 못 가요.
   ③ 아니요, 집 찾기가 어려웠어요.
   ④ 아니요, 제가 음식을 장만할게요.



ຕໍ່ໄປແມ່ນຄຳຖາມກ່ຽວກັບການຟັງບົດສົນທະນາລະຫວ່າງຜູ້ຊາຍ ແລະ ຜູ້ຍິງ ແລ້ວເລືອກເອົາຄຳ
ຕອບທີ່ຖືກຕ້ອງ. ລອງກວດເບິ່ງເນື້ອໃນຂອງຄຳຖາມເທື່ອໜຶ່ງກ່ອນ ຈຶ່ງຟັງຄຳຖາມ.

[4~5] 하나의 이야기를 듣고 두 개의 질문에 대답하십시오.

ຈົ່ງຟັງບົດສົນທະນາໜຶ່ງບົດ ແລ້ວຕອບຄຳຖາມ 2 ຂໍ້.

4. 남자는 여기에 왜 왔습니까? ເປັນຫຍັງຜູ້ຊາຍຄົນນັ້ນ ຈຶ່ງມາທີ່ນີ້?
   ① 선물을 사고 싶어서
   ② 친구를 만나고 싶어서
   ③ 집들이에 초대를 받아서
   ④ 사장님하고 약속이 있어서

5. 남자는 몇 시에 약속을 했습니까? ຜູ້ຊາຍຄົນນັ້ນ ມີນັດຕອນຈັກໂມງ?
   ① 11시　　② 12시
   ③ 1시　　④ 2시



### 듣기 대본 ເນື້ອໃນບົດຟັງ

1. 여: 어떻게 오셨어요? ມີວຽກຫຍັງບໍ?
2. 남: 제가 선물을 준비할까요? ໃຫ້ຂ້ອຍກະກຽມຂອງຂວັນບໍ?
3. 여: 민수 씨, 투안 씨 집들이에 갈 거예요? ມິນຊູ, ເຈົ້າຈະໄປງານຂຶ້ນເຮືອນໃໝ່ຂອງຕວນບໍ?

4-5. 여: 어떻게 오셨어요? ມີວຽກຫຍັງບໍ?
남: 사장님을 만나러 왔습니다. ຂ້ອຍມາເພື່ອພົບຫົວໜ້າ.
여: 약속을 하셨어요? ໄດ້ນັດໄວ້ບໍ?
남: 네, 2시에 약속을 했어요. ເຈົ້າ, ນັດໄວ້ ເວລາ 2 ໂມງ.
여: 지금 회의 중인데 잠깐만 기다리세요. ຕອນນີ້ ແມ່ນກຳລັງປະຊຸມຢູ່, ກະລຸນາລໍຖ້າໜ້ອຍໜຶ່ງ.

정답 1. ④ 2. ③ 3. ① 4. ④ 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ 

[1~2] 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

1. ① 선물을 준비했어요. ② 내가 마중을 나갈게요.
   ③ 아파트라서 쉽게 찾았어요. ④ 혼자 찾아 갈 수 있어요.

2. ① 네, 꼭 오세요. ② 아니요, 저는 갈 거예요.
   ③ 네, 제가 초대할래요. ④ 아니요, 다른 일이 있어요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 집 찾는 것이 어렵지 않았어요? ຊອກຫາທາງມາບ້ານບໍ່ຍາກບໍ?
2. 남: 이번 주말에 과장님 댁 집들이에 미영 씨도 가요?
   ມີຢອງ ກໍຈະໄປງານຂຶ້ນບ້ານໃໝ່ ຂອງຫົວໜ້າພະແນກ ໃນວັນເສົາ-ອາທິດ ນີ້ບໍ?

정답 1. ③ 2. ④



### 유용한 표현 ສຳນວນທີ່ສຳຄັນ

**그게 정말이에요? ນັ້ນແມ່ນເລື່ອງແທ້ບໍ?**

가: 민수 씨가 어제 입원을 했대요. ຂ້ອຍໄດ້ຍິນມາວ່າ ມິນຊູ ເຂົ້າໂຮງໝໍມື້ວານນີ້.
나: **그게 정말이에요? ນັ້ນແມ່ນເລື່ອງແທ້ບໍ?**



# EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ ຂໍ້ 3 ແມ່ນຄຳຖາມກ່ຽວກັບການເລືອກຄຳສັບທີ່ເໝາະສົມໃສ່ໃນປະໂຫຍກ. ຈົ່ງລອງ ຄິດທົບທວນເຖິງຄຳສັບທີ່ຮຽນມາ ແລ້ວເລືອກຄຳສັບທີ່ຖືກຕ້ອງ.

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 반장님, 집들이에 ________________ 주셔서 감사합니다.
   ຫົວໜ້າຫ້ອງການ, ຂໍຂອບໃຈທີ່ ເຊີນ ມາງານຂຶ້ນເຮືອນໃໝ່.

   ① 인사해　② 초대해　③ 장만해　④ 준비해

2. 한국 사람들은 보통 다른 사람의 집을 ______________ 때 선물을 가지고 갑니다. 작은 것이라도 서로 나누는 것을 '정'이라고 생각합니다.
   ໂດຍປົກກະຕິ ໃນເວລາໄປຢ້ຽມຢາມເຮືອນຄົນອື່ນ, ຄົນເກົາຫຼີຈະມີຂອງຂວັນໄປນຳ. ເຖິງວ່າຈະເປັນສິ່ງເລັກນ້ອຍ ແຕ່ກໍເປັນການແບ່ງປັນເຊິ່ງກັນ ແລະ ກັນ ເຊິ່ງຖືວ່າເປັນນ້ຳໃຈ ແລະ ຄວາມຮັກແພງ.

   ① 방문할　② 전화할　③ 배웅할　④ 마중할

3. ________________에 늦거나 지키지 못할 때는 미리 전화를 해야 합니다.
   ເວລາທີ່ຈະໄປຊ້າ ຫຼື ບໍ່ສາມາດຮັກສາ ນັດໝາຍ, ສັນຍາ ໄດ້, ຕ້ອງໂທບອກລ່ວງໜ້າ.

   ① 선물　② 약속　③ 안내　④ 음식



ຕໍ່ໄປແມ່ນບົດເລື່ອງກ່ຽວກັບ ການຂຶ້ນເຮືອນໃໝ່. ລອງຄິດທົບທວນເບິ່ງວ່າ ໃນເວລາຂຶ້ນເຮືອນໃໝ່ ແມ່ນເຮັດຫຍັງແດ່ ແລະ ການກະກຽມຂອງຂັວນສຳລັບຂຶ້ນເຮືອນໃໝ່ແມ່ນມີຄືແນວໃດ ແລ້ວຕອບຄຳຖາມ.

[4~5] 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

저는 지난 주말에 집들이를 했습니다. 그래서 토요일 아침에 집안을 깨끗이 청소했습니다. 그리고 오후에 가서 고기와 여러 가지 채소를 샀습니다. 집에 와서 음식을 장만했습니다. 저녁 6시가 되어서 친구들이 집에 왔습니다. 집들이 선물로 세제와 휴지를 받아서 기분이 아주 좋았습니다. 우리는 저녁을 맛있게 먹고 이야기를 나눴습니다. 정말 재미있었습니다.

ຂ້ອຍໄດ້ຈັດງານຂຶ້ນເຮືອນໃໝ່ ອາທິດແລ້ວນີ້. ສະນັ້ນ, ໃນວັນເສົາ ຕອນເຊົ້າ ຂ້ອຍໄດ້ທຳຄວາມສະອາດພາຍໃນເຮືອນ ແລະ ໃນຕອນແລງ ຂ້ອຍໄດ້ໄປຕະຫຼາດ ແລ້ວໄດ້ຊື້ຊີ້ນ ແລະ ຜັກຊະນິດຕ່າງໆ. ເມື່ອກັບມາເຮືອນແລ້ວ ຂ້ອຍກໍໄດ້ກະກຽມ ອາຫານ. ເມື່ອຮອດເວລາ 6 ໂມງ, ໝູ່ຄູ່ກໍໄດ້ມາຮອດເຮືອນ. ຂ້ອຍໄດ້ ແຟັບ ແລະ ເຈ້ຍອະນາໄມເປັນຂອງຂວັນຂຶ້ນເຮືອນ ໃໝ່, ເຮັດໃຫ້ຂ້ອຍດີໃຈຫຼາຍ. ພວກເຮົາໄດ້ຮັບປະທານອາຫານແລງຢ່າງແຊບຊ້ອຍ ແລະ ໄດ້ໂອ້ລົມກັນ. ພວກເຮົາໄດ້ມີ ຄວາມມ່ວນຊື່ນນຳກັນຫຼາຍ.

4. 이 사람이 토요일 아침에 한 일을 고르십시오. ຈົ່ງເລືອກສິ່ງທີ່ ຄົນຜູ້ນີ້ ໄດ້ເຮັດໃນວັນເສົາ ຕອນເຊົ້າ.

   ① 상을 차렸습니다.　② 집을 청소했습니다.
   ③ 친구들을 만났습니다.　④ 친구들을 초대했습니다.

5. 이 사람은 집들이 선물로 무엇을 받았습니까? ຄົນຜູ້ນີ້ ໄດ້ຮັບຫຍັງ ເປັນຂອງຂວັນຂຶ້ນເຮືອນໃໝ່?

   ① 고기　② 세제　③ 과일　④ 시계

정답 1. ②　2. ①　3. ②　4. ②　5. ②



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~3] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1. 시내에서 친구를 만나기로 했습니다. 그런데 차가 많이 막혀서 약속 시간에 ________ 것 같습니다.

   ຂ້ອຍໄດ້ນັດພົບໝູ່ຢູ່ໃນເມືອງ. ແຕ່ວ່າຍ້ອນລົດຕິດ ຂ້ອຍເລີຍຄືຈະໄປຊ້າກວ່າເວລານັດ.

   ① 늦을　② 바꿀　③ 도착할　④ 기다릴

2. 오늘 부모님이 한국에 오십니다. 오늘은 과장님께 말씀드리고 부모님을 ____________ 공항에 갈 겁니다.

   ມື້ນີ້ ພໍ່ແມ່ ຂອງຂ້ອຍມາ ເກົາຫຼີ. ມື້ນີ້ ຂ້ອຍເລີຍບອກຫົວໜ້າພະແນກ ແລ້ວກໍຈະ ໄປຮັບ ພໍ່ແມ່ ຢູ່ສະໜາມບິນ.

   ① 마중하러　② 방문하러　③ 생각하러　④ 초대하러

3. 반장님께서 집들이에 우리 직원들을 ______. 그래서 우리는 선물을 사서 반장님 댁으로 갈 겁니다.

   ຫົວໜ້າຫ້ອງການ ໄດ້ເຊີນ ບັນດາພະນັກງານໄປງານຂຶ້ນບ້ານໃໝ່. ສະນັ້ນ, ພວກເຮົາຈຶ່ງຈະຊື້ຂອງຂວັນ ແລ້ວໄປເຮືອນຫົວໜ້າຫ້ອງການ.

   ① 연락하셨습니다　② 배웅하셨습니다　③ 초대하셨습니다　④ 마중하셨습니다

[4~5] 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດຄວາມດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດຄວາມກ່ຽວກັບຫຍັງ.

4. 지난주에 새집으로 이사를 해서 오늘 친구들을 초대했습니다. 친구들은 휴지나 세제를 사 왔습니다. 우리는 고향 음식을 만들어 맛있게 먹었습니다.

   ອາທິດແລ້ວນີ້ ຂ້ອຍໄດ້ຍ້າຍເຮືອນໃໝ່, ມື້ນີ້ ຂ້ອຍເລີຍໄດ້ເຊີນໝູ່ຫຼາຍຄົນມາເຮືອນ. ບັນດາໝູ່ຂອງຂ້ອຍໄດ້ຊື້ ເຈ້ຍອະນາໄມ ແລະ ແຟັບມາໃຫ້. ຂ້ອຍໄດ້ເຮັດອາຫານບ້ານຂ້ອຍ ແລະ ກິນຢ່າງແຊບນົວ.

   ① 결혼식　② 기숙사　③ 사무실　④ 집들이

5. 오늘은 제 생일입니다. 출근하니까 책상 위에 예쁜 모자가 놓여 있었습니다. 사장님께서 제 생일을 기억하고 준비해 주신 것입니다. 참 고마웠습니다.

   ມື້ນີ້ ແມ່ນວັນເກີດຂອງຂ້ອຍ. ຂ້ອຍໄປວຽກ ແລ້ວກໍໄດ້ເຫັນໝວກງາມໆ ວາງຢູ່ເທິງໜ້າໂຕະ. ຫົວໜ້າຂ້ອຍ ເພິ່ນຈື່ວັນເກີດຂອງຂ້ອຍ ຈຶ່ງໄດ້ກຽມຂອງຂວັນໃຫ້. ຂ້ອຍຮູ້ສຶກຂອບໃຈຫຼາຍໆ.

   ① 작업　② 선물　③ 친구　④ 가족

정답 1. ①　2. ①　3. ③　4. ④　5. ②



# 무단 횡단을 하면 안 돼요

ຫ້າມຍ່າງຂ້າມທາງທີ່ຜິດກົດຈໍລະຈອນ

**학습 안내** ຄຳແນະນຳ ໃນການຮຽນ

- □ ຈຸດປະສົງໃນການຮຽນ: ການຫ້າມ, ການອະທິບາຍເຫດຜົນ
- □ ໄວຍາກອນ: -(으)면 안 되다, -(으)니까
- □ ຄຳສັບ ແລະ ສຳນວນຄຳເວົ້າ: ຫ້າມ, ການທີ່ບໍ່ອະນຸຍາດໃຫ້ເຮັດພຶດຕິກຳໃດໜຶ່ງ
- □ ຂໍ້ມູນກ່ຽວກັບວັດທະນາທຳ: ປ້າຍສັນຍາລັກ ໃນສະຖານທີ່ສາທາລະນະ



## 대화 1 ບົດສົນທະນາ 1



Track 70



ຕວນ ແລະ ໂມນິກາ ກຳລັງຈະຂ້າມທາງ. ກ່ອນທີ່ພວກເຂົາທັງສອງ ຈະຂ້າມທາງ ພວກເຂົາລົມກັນກ່ຽວກັບຫຍັງບໍ?. ກ່ອນອື່ນ ຈົ່ງຟັງບົດສົນທະນາກ່ອນ 2 ຄັ້ງແລ້ວເວົ້າຕາມ.

투 안 차가 안 와요. 빨리 건너가요.
ບໍ່ມີລົດມາ. ຂ້າມທາງໄປໄວໆ.

모니카 여기에서 길을 건너면 안 돼요.
ຂ້າມທາງບ່ອນນີ້ ບໍ່ຖືກຕ້ອງ.

투 안 차도 없는데 뭐 어때요?
ລົດກໍບໍ່ມີ ຂ້າມໄດ້ບໍ?

모니카 얼마 전에 제 친구도 무단 횡단을 하다가 다쳤어요.
ໃນບໍ່ດົນຜ່ານມາ ໝູ່ເພື່ອນຂອງຂ້ອຍ ໄດ້ຮັບບາດເຈັບຈາກການຂ້າມທາງບໍ່ຖືກກົດຈໍລະຈອນ.

투 안 정말요? 저는 무단 횡단 금지 표지판이 있어도 그냥 길을 건넜는데…….
ແມ່ນແທ້ບໍ? ເຖິງແມ່ນວ່າ ມີປ້າຍຫ້າມຂ້າມທາງ ຂ້ອຍກໍຍ່າງຂ້າມ ເລີຍ.

모니카 투안 씨도 앞으로 조심하세요. 저기 횡단보도가 있어요. 빨리 가요.
ຕວນກໍຄືກັນ ຕໍ່ໜ້າ ກໍລະວັງຕື່ມເດີ. ບ່ອນນີ້ ມີທາງມ້າລາຍຂ້າມທາງ. ໄປໄວໆ.

> **-아도/어도** -ເຖິງແມ່ນວ່າ
> ໃຊ້ສະແດງເຖິງເຫດການ ຫຼື ພຶດຕິກຳທີ່ເກີດຂຶ້ນກ່ອນນັ້ນ ແມ່ນຈະບໍ່ມີຜົນຫຍັງຕໍ່ກັບເຫດການ ຫຼື ສະຖານະການຕໍ່ມາ.
> - 열심히 공부해도 성적이 안 올라요. ເຖິງແມ່ນວ່າ ຮຽນໜັກ ຄະແນນກໍບໍ່ເພີ່ມຂຶ້ນດອກ.
> - 밥을 먹어도 배가 고프네요. ເຖິງແມ່ນວ່າ ກິນເຂົ້າແລ້ວ ທ້ອງກໍຍັງຫິວຢູ່.

> **-다가**
> ໃຊ້ຕໍ່ກັບພຶດຕິກຳ ຫຼື ເຫດການທີ່ເກີດຂຶ້ນກ່ອນແລ້ວນັ້ນ ແລະ ເຫດການ ຫຼື ພຶດຕິກຳດັ່ງກ່າວ ໄດ້ສົ່ງຜົນກະທົບທາງລົບໃຫ້ເຫດການ ຫຼື ພຶດຕິກຳຕໍ່ມາ.
> - 늦잠을 자다가 회사에 늦었어요. ຍ້ອນໄປນອນເລິກ, ຈຶ່ງເຮັດໃຫ້ໄປເຮັດວຽກຊ້າ.
> - 과속을 하다가 사고가 났어요. ຍ້ອນຂີ່ໄວເກີນກຳນົດ, ຈຶ່ງເຮັດໃຫ້ເກີດອຸປະຕິເຫດ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 모니카 씨의 친구는 왜 다쳤어요? ຍ້ອນຫຍັງໝູ່ເພື່ອນຂອງໂມນິກາ ຈຶ່ງໄດ້ຮັບບາດເຈັບບໍ?
2. 두 사람은 어디에서 길을 건널 거예요? ທັງສອງຄົນນີ້ ຈະຂ້າມທາງຢູ່ໃສ?

정답 1. 무단횡단을 하다가 다쳤어요. 2. 횡단보도에서 길을 건널 거예요.





## 어휘 1 ຄຳສັບ 1 금지 ຫ້າມ



ຕໍ່ໄປ ແມ່ນຈະກ່ຽວກັບປ້າຍສັນຍາລັກ ມີຫຍັງແດ່? ແມ່ນຫຍັງທີ່ຫ້າມບໍ່ໃຫ້ເຮັດ ພວກເຮົາລອງໄປຮຽນຮູ້ນຳກັນເບິ່ງບໍ?



금연
ຫ້າມສູບຢາ



음식물 반입 금지
ຫ້າມນຳເອົາອາຫານເຂົ້າ



휴대전화 사용 금지
ຫ້າມໃຊ້ໂທລະສັບ



사진 촬영 금지
ຫ້າມຖ່າຍຮູບ



실내 정숙
ຫ້າມໃຊ້ສຽງດັງໃນຫ້ອງ



출입 금지
ຫ້າມຜ່ານ



접근 금지
ຫ້າມເຂົ້າໃກ້




무단 횡단 금지
ຫ້າມຍ່າງຂ້າມທາງ
ທີ່ຜິດກົດຈໍລະຈອນ



주차 금지
ຫ້າມຈອດລົດ




과속 금지
ຫ້າມເກີນຄວາມໄວທີ່ກຳນົດ

- 이곳에 **들어가면 안 돼요**. ສະຖານທີ່ນີ້ ຫ້າມເຂົ້າໄປ.
- **손대면 안 돼요**. ຫ້າມຈັບ.
- 횡단보도가 아닌 곳에서 **길을 건너면 안 돼요**. ຫ້າມຂ້າມທາງທີ່ບໍ່ແມ່ນທາງມ້າລາຍ.
- 이곳에 **차를 세우면 안 돼요**. ສະຖານທີ່ນີ້ ຫ້າມຈອດລົດ.



ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳສັບທີ່ເໝາະສົມ.

1. 그림을 보고 알맞은 표현을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ສຳນວນທີ່ເໝາະສົມ.

① 
② 
③ 
④ 
④ 

㉠ 음식물 반입 금지 ㉡ 주차 금지 ㉢ 금연 ㉣ 접근 금지 ㉤ 실내 정숙

정답 ①㉢ ②㉣ ③㉡ ④㉤ ⑤㉠

## 문법 1 ໄວຍາກອນ 1 -(으)면 안 되다

G22-1

'-(으)면 안 되다' ມັນຖືກໃຊ້ຕື່ມທ້າຍຄຳກຳມະ ເພື່ອຫ້າມ ຫຼື ກຳນົດຂໍ້ຫ້າມບໍ່ໃຫ້ກະທຳສິ່ງໃດໜຶ່ງ.

| 자음(ພະຍັນຊະນະ) → **-으면 안 되다** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **면 안 되다** |
|---|---|
| 찍다 → 찍**으면 안 되다** | 하다 → 하**면 안 되다**<br>열다 → 열**면 안 되다** |

- 가: 이곳은 주차 금지예요. 여기에 **주차하면 안 돼요**. ຢູ່ນີ້ຫ້າມຈອດລົດ. ຈອດລົດຢູ່ນີ້ບໍ່ໄດ້ເດີ.
  나: 몰랐어요. 죄송합니다. (ຂ້ອຍ) ບໍ່ຮູ້. ຂໍໂທດເດີ.
- 가: 여기에서 사진을 찍어도 돼요? ຖ່າຍຮູບຢູ່ນີ້ໄດ້ບໍ?
  나: 아니요, 박물관 안에서는 사진을 **찍으면 안 돼요**. ບໍ່ໄດ້, ຫ້າມຖ່າຍຮູບຢູ່ພາຍໃນຫໍພິພິດຕະພັນ.



ເຂົ້າໃຈການໃຊ້ '-(으)면 안 되다' ແລ້ວບໍ? ສະນັ້ນ ຈົ່ງຕື່ມປະໂຫຍກຕໍ່ໄປນີ້ໃຫ້ຄົບຖ້ວນ ດ້ວຍສຳນວນທີ່ເໝາະສົມຈາກຕົວຢ່າງ.

2. 빈칸에 맞는 표현을 〈보기〉에서 골라 '-(으)면 안 되다'를 사용해서 문장을 완성하세요.
ຈົ່ງຕື່ມໃສ່ຫວ່າງປະໂຫຍກຕໍ່ໄປນີ້ ດ້ວຍ '-(으)면 안 되다' ຄືດັ່ງຕົວຢ່າງ.

1) 안에(안으로) ______________________.

2) 공연장 안에서 ______________________.

3) 극장 안에서 ______________________.

보기: 들어가다 사진을 찍다 통화를 하다

정답 1) 들어가면 안 돼요 2) 사진을 찍으면 안 돼요 3) 통화를 하면 안 돼요



ລອງມາຮຽນເພີ່ມເຕີມນຳກັນຕື່ມບໍ? ຈົ່ງເບິ່ງຮູບ ແລ້ວຕື່ມໃສ່ຫວ່າງປະໂຫຍກ ດ້ວຍການໃຊ້ '-(으)면 안 되다' ຄືດັ່ງຕົວຢ່າງ.

1.  여기에서 ______________.

2.  이곳에 ______________.

정답 1. 담배를 피우면 안 돼요 2. 주차하면 안 돼요



## 대화 2 ບົດສົນທະນາ 2

Track 71



ຕໍ່ໄປເປັນການສົນທະນາລະຫວ່າງ ຈີຮຸນ ແລະ ຣີຮັນ ຢູ່ທີ່ສະຖານນີລົດເມ. ຈີຮຸນເວົ້າ ແນວໃດໃຫ້ກັບ ຣີຮັນ ທີ່ກຳລັງຈະສູບຢາ? ກ່ອນອື່ນຈົ່ງຟັງກ່ອນ 2 ຄັ້ງ. ຫຼັງຈາກນັ້ນ ຈົ່ງ ສະແດງບົດບາດເປັນ ຈີຮຸນ ແລະ ຣີຮັນ ແລ້ວເວົ້າຕາມ.

**지훈** 리한 씨, 버스 정류장에서 담배를 피우면 안 돼요.
ຣີຮັນ ສູບຢາ ຢູ່ສະຖານນີຈອດລົດເມ ແມ່ນບໍ່ໄດ້.

**리한** 밖에서도 담배를 피울 수 없어요?
ຢູ່ເບື້ອງນອກກໍ ບໍ່ສາມາດສູບຢາໄດ້ບໍ?

**지훈** 네, 버스 정류장은 금연 구역이니까 담배를 피우면 벌금을 내야 돼요.
ແມ່ນແລ້ວ, ຍ້ອນສະຖານນີຈອດລົດເມແມ່ນເຂດປອດຢາສູບ ຖ້າສູບຢາຈະຕ້ອງຖືກປັບໃໝ.

**리한** 아, 그래요? 몰랐어요.
ອາ, ແມ່ນແທ້ບໍ່? ຂ້ອຍບໍ່ຮູ້ໃດນັ້ນ.

**지훈** 리한 씨, 저 때문에 5만원을 벌었으니까 밥 사세요.
ຣີຮັນ ເປັນຍ້ອນຂ້ອຍ ເຮັດໃຫ້ເຈົ້າບໍ່ໄດ້ເສຍເງິນ 50,000 ວອນ, ເຈົ້າຕ້ອງລ້ຽງເຂົ້າຂ້ອຍ.

**리한** 에이, 왜 그래요? 하하하.
ໂອ, ແມ່ນບໍ? ຮາຮາຮາ.

> **-아야/어야 되다**
> ຕ້ອງ, ຈຳເປັນຕ້ອງ
>
> ມີພັນທະຕ້ອງໄດ້ກະທຳ ຫຼື ປະຕິບັດ.
>
> - 내일은 일찍 회사에 가야 돼요.
>   ມື້ອື່ນ ຕ້ອງໄປບໍລິສັດແຕ່ເຊົ້າ.
> - 극장 안에서는 휴대전화를 꺼야 돼요.
>   ຢູ່ໃນໂຮງໜັງ ໂທລະສັບຕ້ອງປິດ.

> **때문에** ຍ້ອນ
>
> ແມ່ນໃຊ້ຊີ້ບອກ ສາເຫດຂອງເຫດການ ຫຼື ການກະທຳ ທາງໜ້ານັ້ນ ຈຶ່ງເປັນສາເຫດສິ່ງຜົນກໍໃຫ້ເກີດເຫດການ ຫຼື ພຶດຕິກຳຕາມມາ.
>
> - 눈 때문에 길이 너무 미끄러워요.
>   ຍ້ອນຫິມະ ຈຶ່ງເຮັດໃຫ້ເສັ້ນທາງມື່ນຫຼາຍ.
> - 감기 때문에 회사에 결근했어요.
>   ຍ້ອນເປັນຫວັດ ຈຶ່ງເຮັດໃຫ້ຂາດວຽກ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 버스 정류장에서 담배를 피워도 돼요?
   ຢູ່ສະຖານນີຈອດລົດເມ ສູບຢາໄດ້ບໍ?
2. 금연 구역에서 담배를 피우면 어떻게 해야 할까요?
   ຢູ່ໃນເຂດຫ້າມສູບຢາ ຖ້າສູບຢາ ຕ້ອງເຮັດແນວໃດບໍ?

정답 1. 아니요, 담배를 피우면 안 돼요. 2. 벌금을 내야 돼요.



## 어휘 2 ຄຳສັບ 2 하면 안 되는 행동 ພຶດຕິກຳທີ່ຫ້າມ



ໃນສະຖານທີ່ສາທາລະນະ ພຶດຕິກຳ ທີ່ຫ້າມບໍ່ໃຫ້ກະທຳ ມີພຶດຕິກຳອັນໃດແດ່?



담배를 피우다
ສູບຢາ



담배꽁초를 버리다
ຖິ້ມກົ້ນຢາສູບ



쓰레기를 버리다
ຖິ້ມຂີ້ເຫຍື້ອ



침을 뱉다
ຖົ່ມນໍ້າລາຍ



뛰어다니다
ແລ່ນໄປມາ



떠들다
ເວົ້າສຽງດັງ



새치기를 하다
ລັດຄິວ



자리를 차지하다
ຈອງໃຊ້ຕັ່ງໂດຍທີ່ບໍ່ຈຳເປັນ



다리를 벌려서 앉다
ນັ່ງອ້າຂາ ກວ້າງເກີນໄປ



손대다
ສຳພັດ



ຈົ່ງຄຶດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요.
ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




보기

담배를 피우다 새치기를 하다 쓰레기를 버리다 침을 뱉다

정답 1) 새치기를 하다 2) 담배를 피우다 3) 쓰레기를 버리다 4) 침을 뱉다

# 문법 2 ໄວຍາກອນ 2 -(으)니까



'-(으)니까' ໃຊ້ຕື່ມທ້າຍຄຳກຳມະ,ຄຳຄຸນນາມເພື່ອຊີ້ບອກວ່າເນື້ອໃນຂອງປະໂຫຍກໜ້າແມ່ນເປັນເຫດຜົນ, ເປັນຂໍ້ອ້າງອີງໃນການປະເມີນຈຶ່ງພາໃຫ້ເກີດມີການກະທຳໃນປະໂຫຍກຫຼັງ. ຢູ່ທ້າຍຂອງປະໂຫຍກ ມັກລົງທ້າຍດ້ວຍ '-(으)세요', '-(으)ㄹ까요?', '-(으)ㄹ래요?', '-(으)ㅂ시다'.

- 지금은 차가 **막히니까** 지하철을 타고 가세요.
  ດຽວນີ້ ລົດຕິດ ໃຫ້(ເຈົ້າ)ຂີ່ລົດໄຟໄປເດີ.
- 날씨가 **좋으니까** 밖으로 나갈까요? ອາກາດດີ ພວກເຮົາອອກໄປນອກບໍ?
- 내일은 **주말이니까** 같이 영화를 봅시다.
  ມື້ອື່ນ ແມ່ນວັນທ້າຍອາທິດ ໄປເບິ່ງໜັງນຳກັນເທາະ.

## 비교해 보세요 ຈົ່ງປຽບທຽບລອງເບິ່ງ

### ✓ '-(으)니까' '-아서/어서'

'-(으)니까' ກັບ '-아서/어서' ແມ່ນໃຊ້ຊີ້ບອກເຫດຜົນຄືກັນ. ແຕ່ປະໂຫຍກຫຼັງຂອງ '-아서/어서' ແມ່ນໃຊ້ກັບປະໂຫຍກຊັກຊວນ ຫຼື ປະໂຫຍກຮ້ອງຂໍໄດ້. ແຕ່ປະໂຫຍກຫຼັງຂອງ '-(으)니까' ແມ່ນບໍ່ມີຂໍ້ຫ້າມຫຍັງ ແລະ ປະໂຫຍກໜ້າໃຊ້ກັບກາລະອະດີດໄດ້ແຕ່ປະໂຫຍກໜ້າຂອງ '-아서/어서' ໄປກັບກາລະອະດີດບໍ່ໄດ້.

- **더우니까** 창문을 여세요. (O)　　　더워서 창문을 여세요. (X)
- 배가 아팠어서 병원에 갔어요. (X)



ເຂົ້າໃຈການໃຊ້ '-(으)니까' ແລ້ວບໍ? ສະນັ້ນ ຈົ່ງເຊື່ອມປະໂຫຍກໃສ່ກັນໃຫ້ຖືກຕ້ອງ.

2. 다음을 알맞게 연결해서 문장을 완성하세요. ຈົ່ງເຊື່ອມປະໂຫຍກຕໍ່ໄປນີ້ໃສ່ກັນໃຫ້ຖືກຕ້ອງ.

| | |
|---|---|
| ① 이곳은 사진 촬영 금지니까 • | • ㉠ 건물 밖에서 담배를 피우세요. |
| ② 건물 안에서는 금연이니까 • | • ㉡ 전화를 하면 안 돼요. |
| ③ 극장 안에서는 휴대전화 사용 금지니까 • | • ㉢ 사진을 찍으면 안 돼요. |





정답 ①㉢ ②㉠ ③㉡



## 유용한 표현 ສຳນວນທີ່ສຳຄັນ

### 그동안 잘 지내셨어요? ຊ່ວງໄລຍະຜ່ານມາ ແມ່ນສະບາຍດີບໍ?

가: 투안 씨 오랜만이네요. 고향에 잘 다녀왔어요? ຕວນ, ບໍ່ໄດ້ພົບກັນດົນເນາະ. ເປັນແນວໃດໄປຢາມບ້ານເກີດມາແລ້ວບໍ?
나: 네, 과장님. **그동안 잘 지내셨어요?** ເຈົ້າ; ຫົວໜ້າ. **ຊ່ວງໄລຍະຜ່ານມາ ສະບາຍດີບໍ?**

## 활동 ກິດຈະກຳ

1. 〈보기〉처럼 이야기해 보세요. ຈົ່ງລອງລົມກັນຄືດັ່ງຕົວຢ່າງ.

보기 ຕົວຢ່າງ



도서관 ຫໍສະໝຸດ

떠들다
ເຮັດສຽງດັງ

가: 도서관에서 떠들면 안 돼요.
ຢູ່ຫໍສະໝຸດ ຫ້າມເຮັດສຽງດັງ.

나: 죄송합니다.
ຂໍໂທດ.

1)



병원 ໂຮງໝໍ

큰 소리로 전화하다
ລົມໂທລະສັບ ທີ່ໃຊ້ສຽງດັງ



2)

미술관 ຫໍພິພິດຕະພັນ

그림에 손대다
ເອົາມືຈັບຮູບ



3)



공연장 ໂຮງສະແດງ

사진을 찍다
ຖ່າຍຮູບ



4)



식당 ຮ້ານອາຫານ

담배를 피우다
ສູບຢາ

정답 1) 가: 병원에서 큰 소리로 전화하면 안 돼요.
나: 죄송합니다.
2) 가: 미술관에서 그림에 손대면 안 돼요.
나: 죄송합니다.
3) 가: 공연장에서 사진을 찍으면 안 돼요.
나: 죄송합니다.
4) 가: 식당에서 담배를 피우면 안 돼요.
나: 죄송합니다.

✚ 빈칸에 알맞은 말을 쓰세요. ຈົ່ງຂຽນຄຳເວົ້າທີ່ເໝາະສົມໃສ່ບ່ອນຫວ່າງ.

1. 도서관에서 ☐☐☐ 안 돼요. ຢູ່ຫໍສະໝຸດ ຫ້າມໃຊ້ສຽງດັງ.

2. ☐☐☐에서 그림에 손대면 안 돼요. ຢູ່ຫໍພິພິດຕະພັນ ຫ້າມເອົາມືຈັບຮູບ.

3. 식당에서 ☐☐를 피우면 안 돼요. ຢູ່ຮ້ານອາຫານ ຫ້າມສູບຢາ.

정답 1. 떠들면 2. 미술관 3. 담배



## 정보 ຂໍ້ມູນທົ່ວໄປ

### 공공장소 표지판 ປ້າຍສັນຍາລັກໃນສະຖານທີ່ສາທາລະນະ



화장실
ຫ້ອງນ້ຳ



공중전화
ໂທລະສັບສາທາລະນະ



주차장
ສະຖານທີ່ຈອດລົດ



비상구
ທາງອອກສຸກເສີນ




지하철역
ສະຖານນີລົດໄຟໃຕ້ດິນ



기차역
ສະຖານນີລົດໄຟ (ຄວາມໄວສູງ)



택시 정류장
ສະຖານນີລົດແທັກຊີ



버스 정류장
ສະຖານນີລົດເມ



엘리베이터
ລິບ



에스컬레이터
ຂັ້ນໄດເລື່ອນ




자동차 전용
ທາງລົດ



자전거 전용
ທາງລົດຖີບ

**노약자석** ບ່ອນນັ່ງຄົນພິການ, ຜູ້ສູງອາຍຸ ຫຼື ຖືພາ



한국의 지하철과 버스에서는 위와 같은 표지판을 볼 수 있습니다. 이런 표지판이 있는 좌석은 노약자, 장애인, 임산부, 어린 아이를 데리고 있는 사람들을 위한 자리이기 때문에 비워두는 것이 좋습니다. 만약 사람이 없어서 잠깐 앉더라도 이런 사람들을 보면 자리를 양보해야 됩니다.

ຢູ່ເກົາຫຼີ ສຳລັບລົດໄຟໃຕ້ດິນ ຫຼື ລົດເມ ຈະສາມາດເຫັນປ້າຍເຄື່ອງໝາຍດັ່ງກ່າວນີ້. ປ້າຍສັນຍາລັກດັ່ງກ່າວນີ້ ແມ່ນ ບ່ອນນັ່ງທີ່ໃຫ້ບູລິມະສິດແກ່ຜູ້ສູງອາຍຸ, ຄົນພິການ, ຄົນຖືພາ, ເດັກນ້ອຍ ຖ້າສາມາດປະຫວ່າງໄວ້ແມ່ນດີ. ໃນກໍລະນີທີ່ບໍ່ມີກຸ່ມຄົນດັ່ງກ່າວກໍສາມາດນັ່ງຊົ່ວຄາວໄດ້ ແຕ່ຖ້າເຫັນກຸ່ມຄົນດັ່ງກ່າວນັ້ນຂຶ້ນມາ ຕ້ອງຫຼີກອອກຈາກບ່ອນນັ່ງນັ້ນ.



### 내용 확인 ກວດຄືນເນື້ອໃນ

✚ 빈칸에 알맞은 말을 쓰세요. ຈົ່ງຂຽນຄຳເວົ້າທີ່ເໝາະສົມໃສ່ບ່ອນຫວ່າງ.

1. '자전거 ☐☐' 은 자전거만 다닐 수 있는 길입니다.
   ປ້າຍເສັ້ນທາງລົດຖີບ ແມ່ນມີແຕ່ລົດຖີບເທົ່ານັ້ນທີ່ສາມາດໃຊ້ເສັ້ນທາງດັ່ງກ່າວນັ້ນໄດ້.
2. ☐☐☐ 는 긴급한 일이 있을 때 사용하는 출입구입니다.
   ສຳລັບເຄື່ອງໝາຍທາງອອກນັ້ນ ແມ່ນນຳໃຊ້ໃນກໍລະນີສຸກເສີນ.
3. ☐☐☐☐ 은 지하철과 버스 안에서 노약자나 장애인 등을 위한 자리입니다.
   ບ່ອນນັ່ງພິເສດ ແມ່ນຈະເຫັນໄດ້ຢູ່ໃນລົດໄຟໃຕ້ດິນ ຫຼື ລົດເມ ເຊິ່ງເປັນບ່ອນນັ່ງບູລິມະສິດແກ່ຜູ້ສູງອາຍຸ ຫຼື ຄົນພິການ.



1. 전용 2. 비상구 3. 노약자석



# EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ຫາ 3 ແມ່ນເບິ່ງຮູບພາບ ແລ້ວເລືອກເອົາສຳນວນທີ່ຖືກຕ້ອງກັບຮູບພາບ ເຊິ່ງຄົນຢູ່ໃນຮູບພາບກຳລັງເຮັດຫຍັງ. ກ່ອນການຟັງ ຈົ່ງທຳຄວາມເຂົ້າໃຈກັບຮູບໃຫ້ດີເສຍກ່ອນ.

[1~3] 다음 그림을 보고 알맞은 대답을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

Track 72

1. 이 사람은 무엇을 하고 있습니까? ຄົນໃນຮູບນີ້ ລາວກຳລັງເຮັດຫຍັງບໍ?

① ② ③ ④

2. 이 사람은 무엇을 하고 있습니까? ຄົນໃນຮູບນີ້ ລາວກຳລັງເຮັດຫຍັງບໍ?

① ② ③ ④

3. 이 사람은 무엇을 하고 있습니까? ຄົນໃນຮູບນີ້ ລາວກຳລັງເຮັດຫຍັງບໍ?

① ② ③ ④



ຕໍ່ໄປ ເປັນການຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ. ສະຖານທີ່ດັ່ງກ່າວນີ້ ແມ່ນຢູ່ໃສ?, ແມ່ນຫ້າມບໍ່ໃຫ້ເຮັດຫຍັງ? ຈົ່ງຕັ້ງໃຈຟັງໃຫ້ດີ.

[4~5] 하나의 이야기를 듣고 두 개의 질문에 대답하십시오.
ຈົ່ງຟັງບົດສົນທະນາໜຶ່ງບົດ ແລ້ວຕອບຄຳຖາມ 2 ຂໍ້.

4. 여기는 어디입니까? ບ່ອນນີ້ ແມ່ນຢູ່ໃສບໍ?

① 공연장 ② 도서관
③ 미술관 ④ 지하철

5. 들은 내용과 다른 것을 고르십시오. ຈົ່ງເລືອກເອົາສິ່ງທີ່ແຕກຕ່າງຈາກ ເນື້ອໃນທີ່ໄດ້ຍິນ.

① 물을 마시면 안 됩니다. ② 사진을 찍을 수 없습니다.
③ 전화를 하면 안 됩니다. ④ 음식을 먹을 수 없습니다.



### 듣기 대본 ເນື້ອໃນບົດຟັງ

1. ① 남: 술을 마시고 있습니다. ກຳລັງດື່ມເຫຼົ້າ. ② 남: 담배를 피우고 있습니다. ກຳລັງສູບຢາ.
   ③ 남: 주차를 하고 있습니다. ກຳລັງຈອດລົດ. ④ 남: 횡단보도를 건너고 있습니다. ກຳລັງຂ້າມທາງມ້າລາຍ.

2. ① 여: 전화를 하고 있습니다. ກຳລັງໂທລະສັບ.
   ② 여: 사진을 찍고 있습니다. ກຳລັງຖ່າຍຮູບ.
   ③ 여: 큰 소리로 떠들고 있습니다. ກຳລັງສ້າງສຽງດັງລົບກວນ.
   ④ 여: 쓰레기를 버리고 있습니다. ກຳລັງຖິ້ມຂີ້ເຫຍື້ອ.

3. ① 남: 침을 뱉고 있습니다. ກຳລັງຖົ່ມນ້ຳລາຍ. ② 남: 지하철을 타고 있습니다. ກຳລັງຂີ່ລົດໄຟໃຕ້ດິນ.
   ③ 남: 새치기를 하고 있습니다. ກຳລັງລັດຄິວ. ④ 남: 큰 소리로 떠들고 있습니다. ກຳລັງສ້າງສຽງດັງລົບກວນ.

4-5. 여: 저희 고려극장을 찾아 주신 여러분께 감사드립니다. 편안한 관람을 위해 몇 가지 안내 말씀을 드리겠습니다. 먼저, 극장 안에서는 물은 마실 수 있지만 음식물은 가지고 들어오면 안 됩니다. 그리고 공연 중에는 사진 촬영 금지니까 사진을 찍으면 안 됩니다. 마지막으로 휴대전화는 다른 사람들에게 방해가 될 수 있으니까 전화를 하지 마십시오. 그럼 즐거운 관람 되시길 바랍니다. 감사합니다.

ຂໍຂອບໃຈທຸກທ່ານທີ່ໃຫ້ກຽດມາຢຽມຍາມໂຮງໜັງຂອງພວກເຮົາ. ເພື່ອອຳນວຍຄວາມສະດວກໃຫ້ແກ່ການຮັບ ຊົມຂອງທ່ານ ພວກເຮົາຢາກຂໍໃຫ້ຂໍ້ມູນຈຳນວນໜຶ່ງ. ກ່ອນອື່ນ ຢູ່ພາຍໃນໂຮງໜັງ ສາມາດດື່ມນ້ຳໄດ້ ແຕ່ຫ້າມ ບໍ່ໃຫ້ນຳອາຫານທີ່ເປັນນ້ຳເຂົ້າໄປພາຍໃນ. ພ້ອມນັ້ນ ເນື່ອງຈາກບໍ່ອະນຸຍາດໃຫ້ຖ່າຍຮູບໃນເວລາມີການສະແດງ ສະນັ້ນ ຖ່າຍຮູບແມ່ນບໍ່ໄດ້. ອັນສຸດທ້າຍ ເນື່ອງຈາກສຽງໂທລະສັບອາດຈະລົບກວນຄົນອື່ນ ສະນັ້ນ ກະລຸນາຢ່ານຳ ໃຊ້ໂທລະສັບ. ຕໍ່ໄປ ຂໍໃຫ້ທ່ານຈົ່ງຮັບຊົມການສະແດງຢ່າງມີຄວາມສຸກ. ຂໍຂອບໃຈ.

정답 1.② 2.④ 3.③ 4.① 5.①

## 확장 연습 ບົດເຝິກຫັດເພີ່ມເຕີມ

L-22

1. 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມທີ່ສຸດ.

   ① 네, 주차할 줄 알아요. ② 아니요, 주차해도 돼요.
   ③ 네, 주차할 수 없어요. ④ 아니요, 주차하면 안 돼요.

2. 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

   ① 네, 지금 출입이 안 돼요. ② 아니요, 출입 금지예요.
   ③ 네, 공장이 문을 닫았어요. ④ 아니요, 지금 들어가면 돼요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 여기에 주차해도 돼요? ຢູ່ບ່ອນນີ້ ສາມາດຝາກລົດໄດ້ບໍ?
2. 남: 지금 공장 안에 들어갈 수 있어요? ດຽວນີ້ ສາມາດເຂົ້າໄປໃນໂຮງງານໄດ້ບໍ?

정답 1.④ 2.②



## EPS-TOPIK 읽기 ພາກອ່ານ EPS-TOPIK



ສຳລັບຂໍ້ 1 ຫາ 3 ເປັນການເບິ່ງບັນດາປ້າຍສັນຍາລັກຫ້າມ ແລະ ອະທິບາຍ ແຕ່ລະປ້າຍມີເນື້ອໃນຄວາມໝາຍແນວໃດ. ຈົ່ງຄິດທົບທວນກ່ຽວກັບຄຳສັບທີ່ຮຽນມາກ່ອນໜ້ານັ້ນ ເພື່ອຕອບບັນຫາເຫຼົ່ານີ້.

[1~3] 다음 그림을 보고 알맞은 문장을 고르십시오.

ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ເໝາະສົມ.

1. 

① 담배를 팔면 안 됩니다.
② 담배를 사면 안 됩니다.
③ 담배를 피우면 안 됩니다.
④ 담배를 버리면 안 됩니다.

2. 

① 만지면 안 됩니다.
② 떠들면 안 됩니다.
③ 주차하면 안 됩니다.
④ 뛰어다니면 안 됩니다.

3. 

① 휴대전화를 빌릴 수 있습니다.
② 휴대전화를 고칠 수 있습니다.
③ 휴대전화를 사용할 수 없습니다.
④ 휴대전화를 충전할 수 없습니다.



ຕໍ່ໄປ ເປັນການເລືອກເອົາຄຳສັບທີ່ເໝາະສົມຕື່ມໃສ່ຫວ່າງ. ຈົ່ງຄິດທົບທວນບັນດາຄຳສັບທີ່ຮຽນ ມາເພື່ອແກ້ບັນຫາຕໍ່ໄປນີ້.

[4~5] 빈칸에 들어갈 가장 알맞은 것을 고르십시오.

ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

4. 도로나 공원에 ______________을/를 버리면 안 됩니다. 공공장소를 깨끗이 사용해야 합니다.

ຢູ່ຕາມຖະໜົນ ຫຼື ສວນສາທາລະນະ ຫ້າມຖິ້ມຂີ້ເຫຍື້ອ. ສະຖານທີ່ສາທາລະນະ ຕ້ອງນຳໃຊ້ຢ່າງສະອາດ.

① 지갑 ② 사진 ③ 자동차 ④ 쓰레기

5. 길에서는 위험하니까 ______________을/를 하면 안 됩니다. 길을 건널 때 갑자기 차가 와서 사고가 날 수 있습니다.

ຍ້ອນຢູ່ຕາມຖະໜົນມັນອັນຕະລາຍ ຂ້າມທາງບໍ່ຖືກບ່ອນແມ່ນບໍ່ໄດ້. ເນື່ອງຈາກໃນຂະນະທີ່ຂ້າມທາງນັ້ນ ອາດມີລົດມາຢ່າງ ກະທັນຫັນ ແລ້ວສາມາດກໍ່ໃຫ້ເກີດອຸປະຕິເຫດໄດ້.

① 주차 ② 과속 ③ 새치기 ④ 무단 횡단

정답 1. ③ 2. ③ 3. ③ 4. ④ 5. ④



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 다음 그림을 보고 알맞은 문장을 고르십시오. ຕໍ່ໄປ ຈົ່ງເບິ່ງຮູບ ແລ້ວເລືອກເອົາປະໂຫຍກທີ່ເໝາະສົມ.

1. 

① 비상구　　② 공중전화
③ 지하철역　　④ 엘리베이터

2. 

① 손대면 안 돼요.　　② 길을 건너면 안 돼요.
③ 이곳에 들어가면 안 돼요.　　④ 음식을 가지고 들어가면 안 돼요.

[3~4] 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດຄວາມດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດຄວາມກ່ຽວກັບຫຍັງ.

3.

> 버스 정류장에서 담배를 피우면 안 됩니다. 그리고 쓰레기를 버리거나 침을 뱉어도 안 됩니다. 많은 사람들이 이용하는 곳이기 때문에 깨끗하게 사용해야 합니다.
>
> ຢູ່ສະຖານນີລົດເມ ແມ່ນບໍ່ສາມາດສູບຢາໄດ້. ພ້ອມນັ້ນ ຫ້າມບໍ່ໃຫ້ຖິ້ມຂີ້ເຫຍື້ອ ແລະ ຖົ່ມນ້ຳລາຍ. ເນື່ອງຈາກ ເປັນບ່ອນທີ່ມີຜູ້ຄົນຊົມໃຊ້ຢ່າງຫຼວງຫຼາຍ ຕ້ອງນຳໃຊ້ສະຖານທີ່ດັ່ງກ່າວຢ່າງສະອາດ.

① 금연 장소 안내　　② 버스 노선 안내
③ 대중교통 이용 안내　　④ 공공장소 이용 안내

4.

> 길을 건널 때에는 반드시 횡단보도로 건너야 안전합니다. 차가 오지 않을 때에도 무단 횡단을 하면 안 됩니다. 횡단보도로 건널 때에도 차가 오는지 반드시 확인해야 됩니다.
>
> ໃນການຂ້າມຖະໜົນນັ້ນ ແມ່ນຕ້ອງຂ້າມບ່ອນທີ່ມີເສັ້ນທາງມ້າລາຍຈຶ່ງປອດໄພ. ເຖິງແມ່ນວ່າ ບໍ່ມີລົດມາ ການທີ່ຂ້າມທາງທີ່ບໍ່ຖືກກົດຈໍລະຈອນ ແມ່ນບໍ່ໄດ້. ໃນການຂ້າມເສັ້ນທາງມ້າລາຍກໍຕາມ ຕ້ອງກວດໃຫ້ແນ່ໃຈວ່າບໍ່ມີລົດມາ.

① 교통사고 안내　　② 무단 횡단 벌금
③ 횡단보도 이용　　④ 도로 상황 안내

정답 1.② 2.③ 3.④ 4.③



## 발음 ການອອກສຽງ  P-09

### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ພະຍັນຊະນະສຸດທ້າຍ ຫຼື ຕົວສະກົດຂອງພາສາເກົາຫຼີ ພະຍັນຊະນະທີ່ອອກສຽງ ແມ່ນມີໜ້ອຍ ມີພຽງແຕ່ກຸ່ມພະຍັນຊະນະ 7 ຕົວເທົ່ານັ້ນທີ່ອອກສຽງ. ໃນກໍລະນີຂອງ 'ㄱ[k], ㄲ[k'], ㅋ[kʰ]' ທີ່ເປັນສຽງອັດໃນບໍລິເວນເພດານປາກ ຖ້າຫາກຖືກໃຊ້ເປັນຕົວສະກົດແມ່ນຈະສະກົດເປັນ '윽' ແລະ ຈະ ອອກສຽງເປັນສຽງ [ㄱ] ທັງໝົດ.

(1) 책, 국, 막, 가족, 학교　　(2) 밖, 창밖, 낚시, 부엌
(3) 책 주세요.　　(4) 국 더 주세요.



# 23 어른께는 두 손으로 물건을 드려야 해요

ເອົາເຄື່ອງໃຫ້ຜູ້ອາວຸດໂສກວ່າ ແມ່ນຕ້ອງຈັບໃຫ້ດ້ວຍສອງມື

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການເວົ້າໂດຍໃຊ້ຄຳສັບສຸພາບ, ການແນະນຳ |
| □ ໄວຍາກອນ | -(으)시-, -아야/어야 되다/하다 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ຄຳສັບທີ່ເວົ້າສຸພາບ, ມາລະຍາດໃນຊີວິດປະຈຳວັນ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ຕໍ່ກັບຄົນເກົາຫຼີ ອາຍຸມີຄວາມໝາຍ ຄືແນວໃດ? |



## 대화 1 ບົດສົນທະນາ 1

Track 73



ຣີຮັນ ແມ່ນຮັບເຊີນໄປບ້ານເພື່ອນຄົນເກົາຫຼີ. ສະນັ້ນ ຈຶ່ງກຳລັງຖາມ ຈີຮຸນ ກ່ຽວກັບສິ່ງທີ່ ຂ້ອງຄາໃຈ. ກ່ອນອື່ນ ຈົ່ງຟັງບົດສົນທະນາ 2 ຄັ້ງ ແລ້ວເວົ້າຕາມ.

리한 지훈 씨, 제가 한국 친구 집에 초대를 받았는데 어른이 **계시는** 집에 처음 가는 거라서 좀 걱정돼요. 그래서 몇 가지 물어보고 **싶은** 게 있어요.
ຈີຮຸນ ຂ້ອຍໄດ້ຮັບຄຳເຊີນໃຫ້ໄປບ້ານເພື່ອນຄົນເກົາຫຼີ ແຕ່ວ່າ ຂ້ອຍມີຄວາມກັງວົນໜ້ອຍໜຶ່ງ ເພາະວ່າເປັນຄັ້ງທຳອິດທີ່ໄປບ້ານເພື່ອນເກົາຫຼີ. ສະນັ້ນ ຢາກຂໍຖາມຈັກ 2-3 ຄຳຖາມ.

지훈 어떤 게 알고 싶어요?
ຢາກຮູ້ກ່ຽວກັບຫຍັງລະ?

리한 어른들께 어떤 선물을 드리면 좋을까요?
ຖ້າຈະເອົາຂອງຂວັນໃຫ້ຜູ້ໃຫຍ່ ແມ່ນຈະເອົາອັນໃດໃຫ້ດີ?

지훈 보통 과일이나 음료수를 많이 선물해요. 그런데 어른들이 **좋아하시는** 것을 물어보고 사 가세요. 그리고 선물을 드릴 때는 두 손으로 드리세요.
ປົກກະຕິແລ້ວຈະແມ່ນປະເພດໝາກໄມ້ ແຕ່ວ່າ ຖາມຜູ້ໃຫຍ່ວ່າມັກຫຍັງແລ້ວຊື້ໃຫ້ຍິ່ງດີກວ່າ. ພ້ອມນັ້ນ ເວລາເອົາຂອງຂວັນໃຫ້ຕ້ອງໃຊ້ສອງມືຍື່ນໃຫ້.

리한 네, 알겠어요. 고마워요.
ເຈົ້າ, ເຂົ້າໃຈແລ້ວ, ຂອບໃຈຫຼາຍໆ.

> **-는** -ໃຊ້ຕໍ່ໃສ່ຄຳກຳມະ ເພື່ອເຊື່ອມກັບນາມ
> - 제가 좋아하는 음식은 김치찌개예요.
>   ອາຫານທີ່ຂ້ອຍມັກແມ່ນ ຄີມຈີຈີເກ.
> - 나는 잘 웃는 사람이 좋아요.
>   ຂ້ອຍມັກຄົນທີ່ຫົວຍິ້ມງ່າຍ.

> **-(으)ㄴ**
> ໃຊ້ຕໍ່ໃສ່ຄຳຄຸນນາມ ເພື່ອເຊື່ອມຕໍ່ກັບຄຳນາມ.
> - 고향에서 가장 유명한 것이 뭐예요?
>   ສິ່ງທີ່ມີຊື່ສຽງທີ່ສຸດໃນບ້ານເກີດແມ່ນຫຍັງ?
> - 좋은 카메라를 샀네요.
>   ໄດ້ຊື້ກ້ອງຖ່າຍຮູບທີ່ດີ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 어른들께 보통 어떤 선물을 많이 해요? ປົກກະຕິແລ້ວຈະເອົາຂອງຂວັນປະເພດໃດໃຫ້ຜູ້ອາວຸດໂສ?
2. 어른들께 선물을 드릴 때는 어떻게 드려요? ເວລາເອົາຂອງຂວັນໃຫ້ຜູ້ອາວຸດໂສຕ້ອງເຮັດແນວໃດ?

정답 1. 과일이나 음료수를 많이 선물해요. 2. 두 손으로 드려요.





## 어휘 1 ຄຳສັບ 1 어휘 높임 ຄຳສັບສຸພາບ



ໃນປະເທດເກົາຫຼີ ເວລາເວົ້າກັບຜູ້ອາວຸດໂສຕ້ອງໃຊ້ຄຳສຸພາບ. ມາຮຽນຮູ້ກ່ຽວກັບວິທີໃຊ້ຄຳສຸພາບວ່າເປັນແນວໃດ?



계시다 (있다)
ມີ, ຢູ່ (ມີ)



잡수시다/드시다 (먹다)
ຮັບປະທານ/ຮັບປະທານ (ກິນ)



주무시다 (자다)
ນອນ



말씀하시다 (말하다)
ເວົ້າ



편찮으시다 (아프다)
ເຈັບ



돌아가시다 (죽다)
ເສຍຊີວິດ (ຕາຍ)





드리다 (주다)
ເອົາໃຫ້







댁 (집)
ບ້ານ, ເຮືອນ




성함 (이름)
ຊື່




연세 (나이)
ອາຍຸ

- 할머니는 어제부터 **편찮으세요**.
  ແມ່ເຖົ້າບໍ່ສະບາຍແຕ່ມື້ວານນີ້ມາ.
- 할아버지는 작년에 **돌아가셨어요**.
  ພໍ່ເຖົ້າ ໄດ້ເສຍໄປປີກາຍ.
- 저는 할아버지께 선물을 **드려요**.
  ຂ້ອຍເອົາຂອງຂວັນໃຫ້ພໍ່ເຖົ້າຂອງຂ້ອຍ.
- 할아버지는 **댁**에 **계세요**.
  ພໍ່ເຖົ້າ ຢູ່ບ້ານ.
- 할아버지 **성함**이 어떻게 되세요?
  ຊື່ຂອງພໍ່ເຖົ້າວ່າແນວໃດ?
- 가: 할아버지 **연세**가 어떻게 되세요?
  ພໍ່ເຖົ້າອາຍຸໄດ້ຈັກປີແລ້ວ?
  나: 여든 살이세요. ໄດ້ 80 ປີ ແລ້ວ.



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບ ຂ້າງເທິງນັ້ນ.

1. 빈칸에 맞는 표현을 〈보기〉에서 골라 대화를 완성하세요.
ຈົ່ງເລືອກເອົາຄຳທີ່ເໝາະສົມ ແລ້ວຕື່ມໃສ່ບ່ອນຫວ່າງໃຫ້ສົມບູນຄືກັບຕົວຢ່າງ.

1) 가: 지난 주말에 뭐 했어요? ທ້າຍອາທິດທີ່ແລ້ວໄດ້ເຮັດຫຍັງ?
나: 할머니 ____________에 다녀왔어요.

2) 가: 사장님 좀 바꿔 주세요. ຂໍລົມໂທລະສັບກັບທ່ານປະທານແດ່.
나: 지금 사무실에 안 ____________. 잠깐 나가셨어요.

3) 가: 가족이 어떻게 돼요? ຄອບຄົວເຕເປັນແນວໃດ? (ມີຈັກຄົນ)
나: 어머니하고 동생, 저, 3명이에요. 아버지는 3년 전에 ____________.

4) 가: 할머니, ____________이/가 어떻게 되세요?
나: 75살이에요. 75 ປີ ແລ້ວ.

5) 가: 여기 얼마예요? ອັນນີ້ລາຄາເທົ່າໃດ?
나: 맛있게 ____________? 비빔밥하고 김치찌개니까 만 원이에요.

**보기**
연세
돌아가시다
드시다
댁
계시다

정답 1) 댁 2) 계세요 3) 돌아가셨어요 4) 연세 5) 드셨어요

## 문법 1 ໄວຍາກອນ 1 -(으)시-




'-(으)시-' ມັນຖືກໃຊ້ຕື່ມທ້າຍຄຳກຳມະ, ຄຳຄຸນນາມ ໃຊ້ເພື່ອຍົກສູງ ຫຼື ໃຫ້ກຽດປະທານໃນປະໂຫຍກ.

| 자음(ພະຍັນຊະນະ) → **-으시-** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-시-** |
|---|---|
| 읽다 → 읽**으시**다<br>좋다 → 좋**으시**다 | 가다 → 가**시**다<br>바쁘다 → 바쁘**시**다<br>살다 → 사**시**다 |

- 선생님은 지금 무슨 책을 **읽으세요**? ດຽວນີ້ ອາຈານອ່ານປຶ້ມຫຍັງ?
- 사장님은 매일 아침 운동을 **하세요**. ທ່ານປະທານອອກກຳລັງກາຍທຸກໆເຊົ້າ.
- 부모님은 베트남에 **사세요**. ພໍ່ແມ່ອາໃສຢູ່ຫວຽດນາມ.
- 우리 아버지는 키가 **크세요**. ພໍ່ຂອງຂ້ອຍສູງ.

ໃນກໍລະນີທີ່ເຮົາຢາກຍົກສູງປະທານໃນປະໂຫຍກແມ່ນນຳເອົາ '-(으)시-' ເຂົ້າໃສ່ທາງຫຼັງຂອງຄຳກຳມະ, ຄຳ ຄຸນນາມ ເຊິ່ງນຳໃຊ້ໃນຮູບແບບ '-(으)세요' ຫຼາຍ. ກາລະປັດຈຸບັນແມ່ນໃຊ້ '-(으)세요', ກາລະອະດີດແມ່ນໃຊ້ '-(으)셨어요'. ໃນນັ້ນບາງຄຳສັບ ເຊັ່ນ '먹다, 있다, 자다' ກໍປະລິມ '-(으)시-' ໃສ່ແລ້ວປ່ຽນຮູບເປັນ '잡수시다(먹다)', '계시다(있다)', '주무시다(자다)'.



### 대조적 정보 ການປຽບທຽບ

ເນື່ອງຈາກພາສາລາວເປັນພາສາຕະກູນດຽວຈຶ່ງບໍ່ມີການປ່ຽນຮູບຄືກັບພາສາເກົາຫຼີ. ໃນພາສາເກົາຫຼີສາມາດຍົກສູງປະທານຂອງປະໂຫຍກດ້ວຍການຕື່ມ '-(으)시-' ໃສ່ທ້າຍປະໂຫຍກ ຫຼື ໃຊ້ຄຳສັບສຸພາບໃສ່. ແຕ່ໃນພາສາລາວຫາກຢາກຍົກສູງປະທານໃນປະໂຫຍກແມ່ນໃຫ້ໃຊ້ຄຳສັບສຸພາບໃສ່ເລີຍ ຫຼື ແທນຄຳວ່າ 'ທ່ານ'.

- 친구가 회사에서 일한다. ໝູ່ເຮັດວຽກຢູ່ບໍລິສັດ.
- 사장님이 회사에서 **일하신다**. ທ່ານປະທານ (ເພິ່ນ, ລາວ) ເຮັດວຽກຢູ່ບໍລິສັດ.



ເຂົ້າໃຈກ່ຽວກັບ '-(으)시-' ແລ້ວບໍ? ສະນັ້ນ ມາລອງປ່ຽນຄຳທີ່ຂີດກ້ອງລຸ່ມນີ້ ເປັນຄຳສຸພາບ ລອງເບິ່ງ.

**2. 대화에서 밑줄 친 부분을 '-(으)시-'를 사용해서 바르게 고쳐 쓰세요.**
ຈົ່ງແປງ ພາກສ່ວນສຳນວນທີ່ຂີດກ້ອງ ໂດຍການໃຊ້ '-(으)시-' ໃນບົດສົນທະນາຕໍ່ໄປນີ້.

1) 가: 가족은 어디 살아요? ຄອບຄົວອາໃສຢູ່ໃສ?
   나: 부모님은 고향에 살아요. 그리고 형은 한국에 있어요.
   ພໍ່ແມ່ອາໃສຢູ່ບ້ານເກີດ ແລະ ອ້າຍອາໃສຢູ່ໃນປະເທດເກົາຫຼີ.
   → ______________________.

2) 가: 안에 반장님 계세요? ຫົວໜ້າຫ້ອງການຢູ່ຂ້າງໃນບໍ?
   나: 아니요, 조금 전에 나갔어요. ບໍ່, ອອກໄປຂ້າງນອກຫວ່າງໜຶ່ງນີ້.
   → ______________________.

3) 가: 여보세요. 사장님 좀 바꿔 주세요. ອາໂຫຼ, ຂໍລົມສາຍກັບທ່ານປະທານບໍລິສັດແດ່.
   나: 사장님은 지금 회의 중이시라서 전화를 못 받아요.
   ດຽວນີ້ ທ່ານປະທານບໍລິສັດ ກຳລັງປະຊຸມຢູ່ບໍ່ສາມາດຮັບໂທລະສັບໄດ້.
   → ______________________.

정답 1) 사세요 2) 나가셨어요 3) 받으세요



## 대화 2 ບົດສົນທະນາ 2

Track 74



ເຮືອງ ກຳລັງບອກມາລະຍາດການກິນເຂົ້າ ຂອງເກົາຫຼີໃຫ້ກັບ ອາດິດ. ມາລະຍາດໃນການກິນເຂົ້າຂອງເກົາຫຼີມີອັນໃດແດ່? ກ່ອນອື່ນ ຈົ່ງລອງຟັງບົດສົນທະນາ 2 ຄັ້ງ ແລ້ວເວົ້າ ຕາມ.

흐엉 아딧 씨, 한국에서는 식사할 때 밥그릇을 들고 먹으면 안 돼요.
ອາດິດ ໃນປະເທດເກົາຫຼີ ເວລາກິນເຂົ້າ ຖ້າຈັບຖ້ວຍເຂົ້າຍົກຂຶ້ນມາກິນແມ່ນບໍ່ໄດ້.

아딧 아, 그래요? 몰랐어요.
ອ້າ ! ແມ່ນບໍ? ຂ້ອຍບໍ່ຮູ້ເລີຍ.

흐엉 한국에서는 식탁에 밥그릇을 놓고 **먹어야 돼요**. 저도 처음에는 한국의 식사 예절을 잘 몰라서 고생했어요.
ໃນປະເທດເກົາຫຼີ ຖ້ວຍເຂົ້າຕ້ອງປະຢູ່ໜ້າໂຕະແລ້ວກໍ່ກິນເຂົ້າ.
ຕອນທຳອິດ ຂ້ອຍບໍ່ຮູ້ມາລະຍາດການກິນເຂົ້າຂອງເກົາຫຼີ ເລີຍເປັນກັງວົນແດ່.

아딧 저는 **아직도** 잘 모르겠어요. 한국의 식사 예절을 좀 가르쳐 주세요.
ຂ້ອຍຍັງບໍ່ໄດ້ຮູ້ດີກ່ຽວກັບມາລະຍາດການກິນເຂົ້າເທື່ອ.
ກະລຸນາສອນມາລະຍາດການກິນເຂົ້າຂອງເກົາຫຼີໃຫ້ຂ້ອຍແດ່.

흐엉 밥에 숟가락을 꽂으면 안 돼요. 그리고 밥을 먹을 때 소리를 크게 **내지 마세요**.
ຈະບໍ່ເອົາບ່ວງປັກຖ້ວຍເຂົ້າ.
ໃນເວລາກິນເຂົ້າກໍ່ຫ້າມມີສຽງດັງ.

> **아직(도)** ຍັງເທື່ອ
> - 가: 일을 다 끝냈어요?
>   ແລ້ວວຽກໝົດແລ້ວບໍ?
>   나: 아니요, 아직 다 못 했어요.
>   ຍັງເທື່ອ, ຍັງບໍ່ແລ້ວເທື່ອ.
> - 저는 아직도 한국말을 잘 못해요.
>   ຂ້ອຍກໍ່ຄືກັນຍັງເວົ້າພາສາເກົາຫຼີບໍ່ເກັ່ງເທື່ອ.

> **-지 마세요** -ຫ້າມ
> ໃຊ້ໃນເວລາເວົ້າທີ່ເປັນຄຳສັ່ງຫ້າມເຮັດສິ່ງໃດສິ່ງໜຶ່ງກັບຄົນອື່ນ.
> - 일할 때 음식을 먹지 마세요.
>   ເວລາເຮັດວຽກຫ້າມກິນເຂົ້າ.
> - 여기에서 담배를 피우지 마세요.
>   ຢູ່ທີ່ນີ້ຫ້າມສູບຢາ.



ຄັ້ງນີ້ ລອງສະແດງບົດບາດເປັນ ເຮືອງ ແລະ ອາດິດ ແລ້ວເວົ້າຕາມບົດສົນທະນາເບິ່ງ. ໄດ້ຕັ້ງ ໃຈ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 한국에서는 식사할 때 무엇을 하면 안 돼요?
   ຢູ່ເກົາຫຼີເວລາກິນເຂົ້າ ມີຂໍ້ຫ້າມຫຍັງແດ່ທີ່ເຮັດບໍ່ໄດ້?
2. 한국의 식사 예절에는 어떤 것이 있어요?
   ມາລະຍາດຂອງການຮັບປະທານອາຫານເກົາຫຼີ ມີຫຍັງແດ່?

정답 1. 밥그릇을 들고 먹으면 안 돼요.
2. 밥에 숟가락을 꽂으면 안 돼요. 그리고 밥을 먹을 때 소리를 내면 안 돼요.



## 어휘 2 ຄຳສັບ 2 — 생활 예절 ມາລະຍາດໃນຊີວິດປະຈຳວັນ



ສຳນວນທີ່ກ່ຽວຂ້ອງກັບມາລະຍາດໃນຊີວິດປະຈຳວັນນັ້ນ ມີຫຍັງແດ່?
ພວກເຮົາລອງມາຮຽນຮູ້ນຳກັນເບິ່ງບໍ?

※ 하면 안 되는 행동 ພຶດຕິກຳ ທີ່ບໍ່ຄວນເຮັດ




신발을 신고 들어가다
ໃສ່ເກີບເຂົ້າໃນຫ້ອງ



한 손으로 물건을 주다
ເອົາສິ່ງຂອງໃຫ້ມືດຽວ



다리를 떨다
ສັ່ນຂາ



다리를 꼬고 앉다
ນັ່ງຂາກ່າຍຫ້າງ



밥에 숟가락을 꽂다
ເອົາບ່ວງປັກ ໃສ່ຖ້ວຍເຂົ້າ



밥그릇을 들고 먹다
ຍົກຖ້ວຍຂຶ້ນ ກິນເຂົ້າ




소리를 크게 내다
ກິນເຂົ້າທີ່ມີສຽງດັງ

※ 해야 하는 행동 ພຶດຕິກຳທີ່ຄວນເຮັດ



고개를 돌리다
ປິ່ນບ່າໄຫຼ່ອອກໄປທາງອື່ນ



허리를 숙이다
ໂຍກແອວລົງ



자리를 양보하다
ຫຼີກບ່ອນນັ່ງໃຫ້
(ເວລາຂີ່ລົດເມ, ລົດໄຟໃຕ້ດິນ)



ທົບທວນຄຳສັບທີ່ຮຽນມາແລ້ວຕອບຄຳຖາມລຸ່ມນີ້ລອງເບິ່ງບໍ?

1. 그림을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳເວົ້າທີ່ເໝາະສົມ.

①  • • ㉠ 밥그릇을 들고 밥을 먹으면 안 돼요.

②  • • ㉡ 신발을 신고 집 안에 들어가면 안 돼요.

③  • • ㉢ 어른께 한 손으로 물건을 드리면 안 돼요.

정답 ①㉢ ②㉡ ③㉠

## 문법 2 ໄວຍາກອນ 2 -아야/어야 되다/하다




'-아야/어야 되다/하다 ມັນຖືກໃຊ້ຕື່ມທ້າຍຄຳກຳມະເຊິ່ງປະທານຂອງປະໂຫຍກມີໜ້າທີ່ຈຳເປັນຕ້ອງລົງມືເຮັດເອງ. ນອກນີ້ກໍຊີ້ບອກໃຫ້ເຫັນວ່າ ຄວນຈະຕ້ອງເຮັດແບບນັ້ນ. ໃນນີ້ '되다' ກັບ '하다' ແມ່ນມີຄວາມໝາຍດຽວກັນ.

- 한국인 집을 방문할 때는 신발을 벗고 **들어가야 해요**.
  ເວລາເຮົາໄປຢ້ຽມຢາມເຮືອນຄົນເກົາຫຼີ ເຮົາຕ້ອງປົດເກີບກ່ອນຈຶ່ງເຂົ້າໄປ.
- 어른께는 두 손으로 물건을 **드려야 해요**. ເຈົ້າຕ້ອງໃຫ້ສິ່ງຂອງແກ່ຜູ້ໃຫຍ່ດ້ວຍມືທັງສອງເບື້ອງ.
- 지하철 안에서는 어른께 자리를 **양보해야 해요**. ເຈົ້າຕ້ອງເສຍສະລະບ່ອນນັ່ງຢູ່ໃນລົດໄຟຟ້າໃຕ້ດິນໃຫ້ຜູ້ອາວຸໂສນັ່ງ.



### 비교해 보세요 ຈົ່ງປຽບທຽບລອງເບິ່ງ

**✓ '-아야/어야 되다/하다' '-(으)면 안 되다'**

'-아야/어야 되다/하다' ມັນຊີ້ບອກເຖິງໜ້າທີ່ຕ້ອງລົງມືກະທຳເຮັດສິ່ງນັ້ນເອງ. ແຕ່ '-(으)면 안 되다' ຖືກໃຊ້ໃນກໍລະນີຫ້າມ ຫຼືບໍ່ໃຫ້ລົງມືກະທຳເອງ.

- 쓰레기는 쓰레기통에 **버려야 돼요**. 함부로 **버리면 안 돼요**.



ເຂົ້າໃຈກ່ຽວກັບ '-아야/어야 되다/하다' ແລ້ວບໍ? ສະນັ້ນ ຈົ່ງເບິ່ງຮູບຕໍ່ໄປນີ້ ແລ້ວເລືອກເອົາຮູບພາບທີ່ຖືກຕ້ອງທີ່ສຸດ.

**2. 그림을 보고 맞는 답을 고르세요.** ຈົ່ງເບິ່ງຮູບພາບ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

1)



가: 어른께 인사할 때 어떻게 해요?
ທັກທາຍຜູ້ອາວຸດໂສຈະເຮັດແນວໃດ?
나: ______________________.

① 허리를 숙여야 해요　　② 손을 들고 인사해야 해요

2)



가: 지하철에서 어떻게 해야 해요?
ໃນສະຖານີລົດໄຟໃຕ້ດິນຕ້ອງເຮັດແນວໃດ?
나: ______________________.

① 어른께 자리를 양보해야 해요　　② 자리를 차지하고 앉아 있어야 해요






'-아야/어야 되다/하다' ລອງມາຮຽນຮູ້ນຳກັນຕື່ມບໍ? ຈົ່ງຕື່ມປະໂຫຍກຕໍ່ໄປນີ້ໃຫ້ຄົບຖ້ວນ ໂດຍການໃຊ້.

줄을 서다　　휴대전화를 끄다　　두 손으로 드리다

1. 극장에서 영화를 볼 때는 ______________.
2. 어른께 물건을 드릴 때는 ______________.
3. 지하철을 탈 때는 ______________.

정답
1. 휴대전화를 꺼야 해요
2. 두 손으로 드려야 해요
3. 줄을 서야 해요

## 활동 ກິດຈະກຳ

〈보기〉처럼 이야기해 보세요. ຈົ່ງສ້າງບົດສົນທະນາ ຄືກັບຕົວຢ່າງ.

보기 ຕົວຢ່າງ 밥을 먹을 때 ເວລາກິນເຂົ້າ



식탁 위에 놓고 먹다
ວາງຖ້ວຍໄວ້ເທິງໂຕະ ແລ້ວຮັບປະທານ

가: 한국에서 밥을 먹을 때 어떻게 해야 돼요?
ໃນເວລາກິນເຂົ້າຈະຕ້ອງເຮັດແນວໃດ?

나: 밥그릇을 들고 먹으면 안 돼요. 식탁 위에 놓고 먹어야 돼요.
ຍົກຖ້ວຍເຂົ້າຂຶ້ນມາກິນແມ່ນບໍ່ໄດ້, ຈະຕ້ອງວາງໄວ້ໂຕະອາຫານ ແລ້ວກໍຕັກກິນ.

1) 어른께 물건을 드릴 때
ເວລາເອົາສິ່ງຂອງໃຫ້ຜູ້ອາວຸດໂສ



두 손으로 드리다
ຕ້ອງຈັບສອງມືແລ້ວຍື່ນໃຫ້

2) 집에 들어갈 때
ເວລາເຂົ້າໄປໃນເຮືອນ




신발을 벗고 들어가다
ປົດເກີບແລ້ວເຂົ້າໄປ

3) 밥을 먹을 때 ເວລາກິນເຂົ້າ




조용히 먹다
ກິນຢ່າງລະໝັດລະວັງ

4) 지하철에서 ເວລາຂີ່ລົດໄຟໃຕ້ດິນ




자리를 양보하다
(ຫຼີກບ່ອນນັ່ງ)ໃຫ້ (ເວລາຂີ່ລົດ ໄຟໃຕ້ດິນ, ລົດເມ)

**정답** 1) 가: 한국에서 어른께 물건을 드릴 때 어떻게 해야 돼요?
나: 한 손으로 물건을 드리면 안 돼요. 두 손으로 드려야 돼요.
2) 가: 한국에서 집에 들어갈 때 어떻게 해야 돼요?
나: 신발을 신고 들어가면 안 돼요. 신발을 벗고 들어가야 돼요.
3) 가: 한국에서 밥을 먹을 때 어떻게 해야 돼요?
나: 소리를 크게 내면 안 돼요. 조용히 먹어야 돼요.
4) 가: 한국에서 지하철에서 어떻게 해야 돼요?
나: 노약자석에 앉으면 안 돼요. 자리를 양보해야 돼요.



## 정보 ຂໍ້ມູນທົ່ວໄປ

# 한국인들에게 나이란?

**ອາຍຸມີຄວາມໝາຍຄືແນວໃດຕໍ່ກັບຄົນເກົາຫຼີ?**

한국에서는 처음 보는 사람에게도 나이를 자주 물어봅니다. 외국인들은 한국인들이 처음 만났을 때 나이를 물어봐서 당황하는 경우가 있는데 한국에서는 나이를 묻는 것이 실례되는 행동은 아닙니다. 왜냐하면 한국에서는 나이가 많은 사람에게는 높임말을 쓰는 등 예의를 지켜야 하기 때문입니다. 높임말을 쓰는 것 말고도 어른 앞에서 지켜야 하는 행동들이 있는데 어떤 것인지 알아볼까요?

ໃນປະເທດເກົາຫຼີ ເວລາພົບກັນຄັ້ງທຳອິດກໍມັກຈະຖາມກ່ຽວກັບອາຍຸ, ຄົນຕ່າງປະເທດ ກັບຄົນເກົາຫຼີສ່ວນໃຫຍ່ ຈະມີຄວາມມຶນງົງ ເວລາພົບກັນເທື່ອທຳອິດແລ້ວຖາມກ່ຽວກັບອາຍຸ ແຕ່ວ່າໃນປະເທດ ເກົາຫຼີການຖາມກ່ຽວກັບອາຍຸນັ້ນບໍ່ແມ່ນເປັນການເສຍມາລະຍາດ, ເພາະວ່າໃນປະເທດເກົາຫຼີ ຕ້ອງໄດ້ໃຊ້ຄຳສັບທີ່ສຸພາບກັບຜູ້ອາວຸດໂສກວ່າ ຕ້ອງເວົ້າຄຳສັບສຸພາບ ແລະ ຕ້ອງລະມັດລະວັງໃນການໄປມາໃນເວລາຢູ່ຕໍ່ໜ້າຜູ້ໃຫຍ່ວ່າຈະເຮັດແນວໃດນັ້ນ ພວກເຮົາມາຮຽນຮູ້ນຳກັນເລີຍບໍ?

**밥을 먹을 때** ເວລາກິນເຂົ້າ

- 어른이 먼저 숟가락을 들 때까지 기다리기 ຕ້ອງລໍຖ້າຜູ້ອາວຸດໂສຮັບປະທານ (ກິນ) ກ່ອນ.
- 어른이 식사를 마칠 때까지 자리에서 일어나지 않기
  ເວລາຜູ້ອາວຸດໂສ ກຳລັງຮັບປະທານອາຫານ ຢູ່ບໍ່ຄວນລຸກຂຶ້ນ.

**술을 마실 때** ເວລາດື່ມເຫຼົ້າ

- 어른께 술을 받을 때는 두 손으로 받기 ເວລາຮັບເຫຼົ້າຈາກຜູ້ອາວຸດໂສຕ້ອງຮັບເອົາສອງມື.
- 어른이 먼저 술을 마신 후에 마시기 ໃຫ້ຜູ້ອາວຸດໂສດື່ມກ່ອນ ແລ້ວຈຶ່ງດື່ມຕາມ.
- 어른 앞에서는 고개를 돌리고 술 마시기
  ໃນເວລາຢູ່ຕໍ່ໜ້າຕ້ອງປິ່ນໜ້າອອກໄປທາງຂ້າງ. ຂອງຜູ້ອາວຸດໂສ ແລ້ວກໍດື່ມເຫຼົ້າ.

**물건을 주고받을 때** ເວລາເອົາສິ່ງຂອງໃຫ້ ແລະ ຮັບເຄື່ອງຈາກຜູ້ອາວຸດໂສ.

- 어른께 물건을 드릴 때 두 손으로 드리기 ເວລາເອົາສິ່ງຂອງໃຫ້ຜູ້ອາວຸດໂສຕ້ອງຈັບດ້ວຍ ສອງມືແລ້ວຍື່ນໃຫ້.
- 어른이 물건을 주실 때 두 손으로 받기 ເວລາຮັບເອົາສິ່ງຂອງຈາກຜູ້ອາວຸດໂສ ຕ້ອງຮັບດ້ວຍສອງມື.

**기타** ອື່ນໆ

- 인사를 할 때는 허리를 숙이기 ເວລາທັກທາຍ, ຄຳນັບຕ້ອງໂຍະແອວລົງໜ້ອຍໜຶ່ງ.
- 어른 앞에서 담배 피우지 않기 ຫ້າມສູບຢາຢູ່ຕໍ່ໜ້າຜູ້ໃຫຍ່.
- 지하철이나 버스에서 어른께 자리 양보하기 ເວລາຂີ່ລົດໄຟໃຕ້ດິນ ຫຼື ລົດເມ ຕ້ອງຫຼີກບ່ອນນັ່ງໃຫ້ຜູ້ອາວຸດໂສ.



## 내용 확인 ກວດຄືນເນື້ອໃນ

✚ 빈칸에 알맞은 말을 쓰세요. ຈົ່ງຂຽນຄຳເວົ້າທີ່ເໝາະສົມໃສ່ບ່ອນຫວ່າງ.

1. 어른께 물건을 드릴 때 ☐ ☐으로 드려야 해요.
   ເວລາເອົາສິ່ງຂອງໃຫ້ຜູ້ອາວຸດໂສຈະຕ້ອງຈັບ ສອງມືແລ້ວຍື່ນໃຫ້.
2. 지하철에서 어른께 자리를 ☐ ☐해야 해요.
   ເວລາຂີ່ລົດໄຟໃຕ້ດິນຈະຕ້ອງຫຼີກບ່ອນນັ່ງ ໃຫ້ຜູ້ອາວຸດໂສ.

정답 1. 두 손 2. 양보



## EPS-TOPIK 듣기 ພາກຟັງ EPS-TOPIK



ແຕ່ຂໍ້ທີ 1 ຫາ 2 ແມ່ນຟັງບົດສົນທະນາແລ້ວ ເລືອເອົາຮູບທີ່ຖືກຕ້ອງ ແລະ ເໝາະສົມທີ່ສຸດ.
ກ່ອນຟັງຄຳຖາມ ຈົ່ງກວດຄືນເບິ່ງຮູບພາບກ່ອນ.

[1~3] 잘 듣고 내용과 관계있는 그림을 고르십시오.
ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເລືອກເອົາຮູບທີ່ກ່ຽວຂ້ອງກັບເນື້ອນັ້ນ.

Track 75

1. ① ② ③ ④

2. ① ② ③ ④

3. ① ② ③ ④



ຈົ່ງຟັງຄຳຖາມຕໍ່ໄປນີ້ ແລະ ເລືອກເອົາຄຳຕອບທີ່ຖືກຕ້ອງທີ່ສຸດ, ກ່ອນຟັງຄຳຖາມ ຈົ່ງກວດຄືນເບິ່ງຄຳຕອບກ່ອນ.

[4~5] 질문을 듣고 알맞은 대답을 고르십시오.
ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

4. ① 잘 지냈어요. ② 책을 읽어요.
③ 회사에 다니세요. ④ 다음 주에 아버지가 오세요.

5. ① 예순 살입니다. ② 10월 24일입니다.
③ 우리 할머니이십니다. ④ 저는 이영수라고 합니다.



### 듣기 대본 ເນື້ອໃນບົດຟັງ

1. 남: 할아버지는 지금 뭐 하세요? ພໍ່ເຖົ້າກຳລັງເຮັດຫຍັງ?
   여: 방에서 주무세요. ນອນຢູ່ໃນຫ້ອງ.
2. 여: 할아버지는 지금 어디 사세요? ດຽວນີ້ພໍ່ເຖົ້າຢູ່ໃສ?
   남: 작년에 돌아가셨어요. ພໍ່ເຖົ້າໄດ້ເສຍໄປແຕ່ປີກາຍແລ້ວ.
3. 여: 한국에서는 지하철에서 할아버지, 할머니를 보면 자리를 양보해야 합니다.
   ຢູ່ລົດໄຟໃຕ້ດິນໃນປະເທດເກົາຫຼີ ຖ້າຫາກເຫັນພໍ່ເຖົ້າ ຫຼື ແມ່ເຖົ້າແລ້ວ ຕ້ອງຫຼີກບ່ອນນັ່ງໃຫ້ພວກເຂົານັ່ງ.
4. 여: 아버지는 무슨 일을 하세요? ພໍ່ເຮັດວຽກຫຍັງ?
5. 남: 실례지만 성함이 어떻게 되세요? ຂໍໂທດ ຊື່ຂອງທ່ານແມ່ນເອີ້ນແນວໃດ?

정답 1.① 2.③ 3.① 4.③ 5.④

## 확장 연습 ບົດເຝິກຫັດເພີ່ມເຕີມ

L-23

[1~2] 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

1. ① 김선우입니다. ② 고향에 계세요.
   ③ 회사에 다니세요. ④ 쉰 다섯 살이세요.

2. ① 과일을 선물하세요. ② 두 손으로 드리세요.
   ③ 생일에 초대를 받았어요. ④ 어머니가 보내 주셨어요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 수미 씨 아버지는 연세가 어떻게 되세요? ອາຍຸຂອງພໍ່ເຖົ້າໄດ້ຈັກປີແລ້ວ?
2. 남: 어떤 선물을 드리면 좋을까요? ເອົາຂອງຂວັນແບບໃດໃຫ້ຈຶ່ງຈະດີ?

정답 1.④ 2.①



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ທີ 1 ຫາ 3 ແມ່ນເບິ່ງຮູບແລ້ວ ຊອກເອົາປະໂຫຍກທີ່ຖືກຕ້ອງທີ່ສຸດ, ຈົ່ງທົບທວນຄືນສິ່ງທີ່ຮຽນມາກ່ອນນີ້ ແລ້ວຕອບຄຳຖາມລຸ່ມນີ້ລອງເບິ່ງ.

[1~3] 다음 그림을 보고 알맞은 문장을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ເໝາະສົມ.

1.



① 할아버지가 편찮으세요.
② 할아버지가 방에 계세요.
③ 할아버지가 식사를 하세요.
④ 할아버지가 비빔밥을 드세요.

2.




① 한국에서는 다리를 떨면 안 됩니다.
② 한국에서는 집에서 바닥에 앉습니다.
③ 한국에서는 밥에 숟가락을 꽂지 않습니다.
④ 한국에서는 집에 들어갈 때 신발을 신으면 안 됩니다.

3.



① 어른께는 허리를 숙여서 인사해야 합니다.
② 어른 앞에서는 조용히 밥을 먹어야 합니다.
③ 어른 앞에서는 다리를 꼬고 앉으면 안 됩니다.
④ 어른 앞에서는 고개를 돌리고 술을 마셔야 합니다.



ຈົ່ງຊອກເອົາຄຳສັບທີ່ຖືກຕ້ອງທີ່ສຸດ ແລ້ວຕື່ມໃສ່ບ່ອນຫວ່າງຕໍ່ໄປນີ້.

[4~5] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

4. 저희 할머니는 ________________ 이/가 많으시지만 매일 운동을 하셔서 건강하십니다.
ແມ່ເຖົ້າຂອງຂ້ອຍເຖິງວ່າອາຍຸຈະຫຼາຍແຕ່ວ່າເພິ່ນອອກກຳລັງກາຍທຸກວັນສຸຂະພາບຍັງແຂງແຮງດີຢູ່.

① 댁　② 성함　③ 연세　④ 생신

5. 한국에서는 어른들과 함께 있을 때 지켜야 할 예절이 많은데, 물건을 주고받을 때 어른께는 두 손으로 물건을 ________________.
ໃນປະເທດເກົາຫຼີ ເວລາຢູ່ກັບຜູ້ອາວຸດໂສ ມີມາລະຍາດທີ່ຕ້ອງປະຕິບັດຕາມມີຫຼາຍຢ່າງ ເຊັ່ນວ່າ: ໃນເວລາໃຫ້ ຫຼື ຮັບເອົາ ວັດຖຸສິ່ງຂອງ ຕ້ອງໃຊ້ສອງມືຈັບ.

① 주셔야 합니다　② 드려야 합니다　③ 돌려야 합니다　④ 숙여야 합니다

정답 1. ②　2. ④　3. ④　4. ③　5. ②



## 확장 연습 ບົດເຝິກຫັດເພີ່ມເຕີມ

**1. 빈칸에 들어갈 가장 알맞은 것을 고르십시오.** ຈົ່ງເລືອກເອົາຄຳສັບ ທີ່ເໝາະສົມ ຕື່ມໃສ່ບ່ອນຫວ່າງ.

> 한국에서는 윗사람에게 지켜야 할 예절이 여러 가지가 있습니다. 예를 들어 윗사람에게 서류나 물건을 ____________ 두 손을 사용해야 합니다.
>
> ໃນປະເທດເກົາຫຼີ ມີມາລະຍາດທີ່ຄວນລະວັງຫຼາຍສິ່ງຫຼາຍຢ່າງ ໃນເວລາພົບກັບຜູ້ອາວຸດໂສ ເຊັ່ນ: ເວລາເອົາເອກະສານ ຫຼື ຂອງຂວັນໃຫ້ຜູ້ໃຫຍ່ຕ້ອງໃຊ້ສອງມືຈັບ.

① 사려고　② 살 때에는
③ 드리려고　④ 드릴 때에는

**[2~3] 다음 글을 읽고 무엇에 대한 글인지 고르십시오.**
ຈົ່ງອ່ານບົດຄວາມດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດຄວາມກ່ຽວກັບຫຍັງ.

2.

> 한국에서는 보통 친구에게 손을 흔들며 '안녕'이라고 합니다. 하지만 나이가 많거나 지위가 높은 사람에게는 '안녕하세요'라고 하면서 허리를 숙입니다.
>
> ໃນປະເທດເກົາຫຼີ ປົກກະຕິແລ້ວເວລາເວົ້າທັກທາຍໝູ່ເພື່ອນຈະຈັບມືແລ້ວເວົ້າຄຳວ່າ: ສະບາຍດີ. ແຕ່ວ່າເວລາເວົ້າກັບຜູ້ທີ່ມີອາຍຸສູງກວ່າ ຫຼືວ່າ ຜູ້ທີ່ມີໜ້າທີ່ຕຳແໜ່ງສູງກວ່າ ຈະໂຢະແອວກົ້ມຫົວລົງແລ້ວເວົ້າວ່າ: ສະບາຍດີ.

① 인사　② 근무　③ 친구　④ 가족

3.

> 초대를 받아 한국 사람의 집을 방문할 때는 작은 선물을 준비하는 게 좋습니다. 그리고 집에 들어가서는 먼저 어른께 인사를 드려야 합니다.
>
> ເວລາໄດ້ຮັບເຊີນໄປບ້ານຄົນເກົາຫຼີ ເອົາຂອງຂວັນເລັກໆນ້ອຍຕິດມືໄປ ແມ່ນຈະເປັນການດີ ແລະ ເວລາເຂົ້າໄປໃນ ເຮືອນກ່ອນອື່ນແມ່ນທັກທາຍຜູ້ອາວຸດໂສກ່ອນ.

① 방문 예절　② 선물 구입　③ 주소 확인　④ 약속 변경

정답 1. ④　2. ①　3. ①



## 발음 ການອອກສຽງ  P-10

### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ໃນຕົວສະກົດຂອງພາສາເກົາຫຼີ ພະຍັນຊະນະທີ່ອອກສຽງ ແມ່ນມີໜ້ອຍ. ມີພຽງກຸ່ມພະຍັນຊະນະ ຈຳນວນ 7 ຕົວທີ່ອອກສຽງໄດ້. ໃນກໍລະນີສຽງອັດໃນບໍລິເວນຮີມປາກ 'ㅂ[p], ㅍ[ph]' ທັງໝົດທີ່ລົງທ້າຍດ້ວຍຕົວ ສະກົດ 'ㅂ' ແມ່ນຈະບໍ່ອອກສຽງເປັນ 'ㅍ[pʰ]' ແຕ່ຈະອອກເປັນສຽງ 'ㅂ[p]'.

(1) 입, 집, 삽, 밥, 지갑
(2) 잎, 앞, 숲
(3) 집도 커요.



# 한국 영화를 보면서 공부해요

ຂ້ອຍເບິ່ງໜັງເກົາຫຼີ ແລະ ຮຽນໄປພ້ອມ

**학습 안내**
ຄຳແນະນຳ ໃນການຮຽນ

- ☐ ຈຸດປະສົງໃນການຮຽນ — ການເວົ້າກ່ຽວກັບວິທີການຮຽນໜັງສື, ການອະທິບາຍວິທີການສະໝັກ
- ☐ ໄວຍາກອນ — -(으)면서, -기 쉽다/어렵다
- ☐ ຄຳສັບ ແລະ ສຳນວນຄຳເວົ້າ — ການຮຽນ, ການສຶກສາ
- ☐ ຂໍ້ມູນກ່ຽວກັບວັດທະນາທຳ — ໂປຣແກຣມການເຝິກອົບຮົມ ສຳລັບແຮງງານຕ່າງດ້າວ



## 대화 1 ບົດສົນທະນາ 1

Track 76



ຕໍ່ໄປນີ້ ແມ່ນບົດສົນທະນາລະຫວ່າງ ສຸພິກາ ແລະ ເຮືອງ. ສຸພິກາ ກຳລັງຖາມເຮືອງວ່າ ເຮືອງຮຽນພາສາເກົາຫຼີແນວໃດ. ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

수피카　흐엉 씨, 주말에 시간이 있어요?
ເຮືອງ, ວັນເສົາອາທິດນີ້ ເຈົ້າມີເວລາບໍ?

흐　엉　네, 그런데 왜요? ເຈົ້າ, ມີຫຍັງບໍ?

수피카　한국어가 너무 어려워서 그러는데 한국어 좀 가르쳐 주세요.
ຍ້ອນວ່າພາສາເກົາຫຼີ ແມ່ນຍາກຫຼາຍ, ຊ່ວຍສອນພາສາເກົາຫຼີໃຫ້ຂ້ອຍແນ່.

흐　엉　좋아요. ໄດ້. ດີຄືກັນ.

수피카　그런데 흐엉 씨는 한국어를 어떻게 공부해요? 학원에 다녀요?
ເຮືອງ ຮຽນພາສາເກົາຫຼີແນວໃດບໍ? ຮຽນຢູ່ ໂຮງຮຽນບໍ?

흐　엉　아니요, 저는 영화 보는 것을 좋아해서 한국 영화를 보면서 공부해요. 수피카 씨도 좋아하는 것을 하면서 공부해 보세요.
ບໍ່, ຍ້ອນວ່າ ຂ້ອຍມັກເບິ່ງໜັງ ຂ້ອຍຈຶ່ງເບິ່ງໜັງ ແລະ ຮຽນພາສາເກົາຫຼີໄປພ້ອມ. ສຸພິກາ ກໍຄືກັນ, ລອງເຮັດສິ່ງທີ່ມັກ ແລະ ຮຽນພາສາເກົາຫຼີໄປພ້ອມເບິ່ງແມ້.

> **그런데** ເຖິງຢ່າງໃດກໍຕາມ (ແຕ່ວ່າ)
> ໃຊ້ໃນເວລາທີ່ຈະປ່ຽນທິດທາງຫົວຂໍ້ຂອງບົດສົນທະນາ ໂດຍມີເນື້ອໃນກ່ຽວຂ້ອງກັບສິ່ງທີ່ທີ່ຝ່າຍກົງກັນຂ້າມໄດ້ ເວົ້າໄປແລ້ວ.
> - 가: 오후에 시장 구경 갈까요?
>   ຕອນບ່າຍນີ້, ໄປຍ່າງເລາະຕະຫຼາດບໍ?
> - 나: 그런데 좀 늦게 가요. 먼저 할 일이 좀 있어서요.
>   ແຕ່ວ່າ ຈະໄປຊ້າໜ້ອຍໜຶ່ງ. ຍ້ອນວ່າມີວຽກ ທີ່ຈະຕ້ອງເຮັດກ່ອນໜານັ້ນໜ້ອຍໜຶ່ງ.

> **-아서/어서 그러는데**
> ເປັນການສະແດງເຖິງ ເນື້ອໃນຂອງປະໂຫຍກໜ້າ ເປັນເຫດຜົນທີ່ ເຮັດໃຫ້ເວົ້າປະໂຫຍກຫຼັງ.
> - 지금 바빠서 그러는데 이것 좀 도와주세요.
>   ຂອຍຄາວຽກຢູ່ຕອນນີ້, ກະລຸນາ ຊ່ວຍເຮັດອັນນີ້ໃຫ້ແນ່.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 수피카 씨는 왜 흐엉을 만나고 싶어해요? ເປັນຫຍັງ ສຸພິກາ ຈຶ່ງຢາກພົບ ເຮືອງ?
2. 흐엉 씨는 한국어를 어떻게 공부해요? ເຮືອງ ຮຽນພາສາເກົາຫຼີແນວໃດ?

정답　1. 한국어를 배우고 싶어서요.　2. 한국 영화를 보면서 공부해요.





## 어휘 1 ຄຳສັບ 1 공부 ການຮຽນ



ເວລາຮຽນພາສາເກົາຫຼີ, ເຈົ້າເຮັດແນວໃດ? ລອງມາເບິ່ງ ຄຳສັບກ່ຽວກັບການຮຽນເບິ່ງບໍ?



공부하다
ຮຽນໜັງສື




사전을 찾다
ຊອກຫາຄຳສັບວັດຈະນານຸກົມ




예습하다
ກະກຽມ (ກະກຽມບົດຮຽນ)




복습하다
ທວນຄືນ




학원에 다니다
ໄປໂຮງຮຽນ



인터넷 강의를 듣다
ຮຽນອອນລາຍ



CD를 듣다
ຟັງ CD




따라하다
ເຮັດຕາມ




쉽다
ງ່າຍ



어렵다
ຍາກ



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 그림에 맞는 표현을 〈보기〉에서 골라 문장을 완성하세요.
ຈົ່ງເລືອກສຳນວນ ທີ່ຖືກຕ້ອງກັບຮູບພາບຈາກ <ກອບ> ແລ້ວຕື່ມໃສ່ປະໂຫຍກໃຫ້ຄົບຖ້ວນ.

1)  흐엉 씨는 매일 ____________.

2)  투안 씨는 ______________.

3)  리한 씨는 ______________.

4)  흐엉 씨는 매일 ____________.

보기: 복습하다 　 예습하다 　 학원에 다니다 　 인터넷 강의를 듣다

정답 1) 예습해요 2) 학원에 다녀요 3) 인터넷 강의를 들어요 4) 복습해요



## 문법 1 ໄວຍາກອນ 1 -(으)면서

G24-1

'-(으)면서' ມັນຖືກໃຊ້ຕື່ມທ້າຍຄຳກຳມະ ເພື່ອສະແດງເຖິງການກະທຳທັງສອງຢ່າງໄປພ້ອມກັນ. ປະໂຫຍກໜ້າກັບປະໂຫຍກຫຼັງສາມາດປ່ຽນບ່ອນກັນໄດ້ ແຕ່ມັນຍັງມີຄວາມໝາຍຄືເກົ່າ. ປະທານຂອງທັງສອງປະໂຫຍກຕ້ອງ ແມ່ນປະທານຕົວດຽວກັນ. ໃນກໍລະນີ ໄປກັບຄຳນາມແມ່ນໃຊ້ '(이)면서'.

| 자음(ພະຍັນຊະນະ) → **-으면서** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-면서** |
|---|---|
| 먹다 → 먹**으면서** | 보다 → 보**면서**<br>울다 → 울**면서** |

- 가: 투안 씨, 어제 저녁에 뭐 했어요? ຕວນ, ຕອນແລງ ມື້ວານນີ້ ເຈົ້າ (ໄດ້) ເຮັດຫຍັງ?
  나: 친구하고 밥을 **먹으면서** 이야기했어요. ໃນຂະນະທີ່ (ຂ້ອຍ) ກິນເຂົ້າ ຂ້ອຍລົມກັບໝູ່.
- 영화를 **보면서** 빵을 먹어요. ໃນຂະນະທີ່ເບິ່ງໜັງ ຂ້ອຍກິນເຂົ້າຈີ່.
- 한국 노래를 **들으면서** 한국어를 공부해요. ໃນຂະນະທີ່ຮຽນໜັງສື ກໍຟັງເພງເກົາຫຼີໄປນຳ.
- 지훈 씨는 **학생이면서** 회사원이에요. ໃນຂະນະທີ່ ຈີຮຸນເປັນນັກສຶກສາ ລາວກໍເປັນທັງພະນັກງານບໍລິສັດນຳ.



### 비교해 보세요 ຈົ່ງປຽບທຽບລອງເບິ່ງ

**✔ ລະຫວ່າງ '-(으)면서' ກັບ '-고'**

'-(으)면서' ກັບ '-고' ມັນໃຊ້ຊີ້ບອກວ່າ ເກີດມີການກະທຳທັງສອງຢ່າງເກີດຂຶ້ນໃນເວລາດຽວກັນຄືກັນ. ແຕ່ວ່າ '-(으)면서' ຖືກໃຊ້ໃນກໍລະນີທີ່ການກະທຳທັງສອງຢ່າງດຳເນີນໄປໃນຊ່ວງເວລາດຽວກັນ. ແຕ່ '-고' ໃຊ້ໃນກໍລະນີທີ່ການກະທຳຢູ່ເບື້ອງໜ້າໄດ້ດຳເນີນໄປກ່ອນແລ້ວ ແຕ່ຍັງບໍ່ທັນສຳເລັດ. ຫຼັງຈາກນັ້ນ ການກະທຳຢູ່ເບື້ອງຫຼັງຈຶ່ງຄ່ອຍເກີດຂຶ້ນມາ ເຮັດໃຫ້ການກະທຳທັງສອງຢ່າງໄດ້ທັບຊ້ອນກັນໃນຊ່ວງໃດຊ່ວງໜຶ່ງ.

- 손을 **잡으면서** 말씀하셨어요.
- 손을 **잡고** 말씀하셨어요.



ເຂົ້າໃຈການນຳໃຊ້ '-(으)면서' ແລ້ວບໍ? ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ.

**2. 그림을 보고 '-(으)면서'를 사용해서 대화를 완성하세요.**
ຈົ່ງເບິ່ງຮູບພາບ ແລ້ວຕື່ມໃສ່ບົດສົນທະນາຄົບຖ້ວນ ໂດຍການໃຊ້ '-(으)면서'.

1) 사전을 찾다 /  공부하다

가: 모니카 씨는 어떻게 공부해요? ໂມນິກາ, ເຈົ້າຮຽນໜັງສືແນວໃດ?
나: 저는 모르는 단어는 ______________.

2)  CD를 듣다 / 

따라하다

가: 바루 씨는 참 발음이 좋네요. 어떻게 연습해요?
ບາຣູ ອອກສຽງໄດ້ດີຫຼາຍ. ເຈົ້າເຝິກຝົນແນວໃດ?
나: 저는 매일 ______________.

정답 1) 사전을 찾으면서 공부해요 2) CD를 들으면서 따라해요



## 대화 2 ບົດສົນທະນາ 2






ຮີຮັນ ກຳລັງຖາມ ຕວນ ກ່ຽວກັບການການລົງທະບຽນວິຊາຮຽນ. ການລົງທະບຽນວິຊາຮຽນແມ່ນຕ້ອງເຮັດແນວໃດ? ກ່ອນອື່ນ ຈົ່ງລອງຟັງບົດສົນທະນາສອງຄັ້ງກ່ອນ.

**-(으)ㄹ 것 같다**

ໃຊ້ໃນເວລາທີ່ ຜູ້ເວົ້າຕ້ອງການສະແດງເຖິງການຄາດເດົາ ຫຼື ການສະແດງຄວາມຄິດເຫັນແບບລະມັດລະວັງ.

- 비가 올 것 같아요. 우산을 가져가세요.
  ຝົນຄືຈະຕົກ. ກະລຸນາຖືຄັນຮົ່ມໄປນຳແດ່.
- 너무 바빠서 여행을 못 갈 것 같아요.
  ຍ້ອນຂ້ອຍມີວຽກຫຼາຍ ເລີຍຄືວ່າ ຈະບໍ່ສາມາດໄປທ່ຽວໄດ້.

리한 투안 씨, 어디 갔다 와요?
ຕວນ, ເຈົ້າໄປໃສມາ?

투안 자동차 정비 교육을 받고 왔어요. 나중에 고향에 돌아가서 일을 구할 때 도움이 될 것 같아서요.
ຂ້ອຍໄດ້ໄປຮຽນກ່ຽວກັບການບຳລຸງຮັກສາລົດຍົນມາ. ຍ້ອນວ່າ ຕໍ່ໄປຖ້າຂ້ອຍກັບບ້ານ ແລ້ວມັນຄືຈະເປັນປະໂຫຍດໃນເວລາຊອກຫາວຽກເຮັດ.

리한 저도 그 수업을 듣고 싶은데 그 수업은 어때요?
ຂ້ອຍກໍຢາກຮຽນວິຊານັ້ນຄືກັນ, ວິຊານັ້ນ ເປັນແນວໃດ?

투안 지금 하는 일과 비슷해서 이해하기 쉬워요.
ຍ້ອນວ່າມັນຄ້າຍຄືກັບວຽກທີ່ຂ້ອຍເຮັດຢູ່ໃນປະຈຸບັນ ກໍເລີຍງ່າຍ.

리한 아, 그래요? 어떻게 신청해요?
ອ່າ, ແມ່ນບໍ? ລົງທະບຽນແນວໃດ?

투안 홈페이지에서 신청하면 돼요.
ສາມາດສະໝັກຢູ່ໜ້າເວັບໄດ້ເລີຍ.

**-(으)면 되다**

ໃຊ້ເປັນເງື່ອນໄຂ ວ່າຖ້າມີການກະທຳ ຫຼື ສະຖານະການນັ້ນກໍຈະບໍ່ມີບັນຫາ ເກີດຂຶ້ນ ຫຼື ມີຄວາມພຽງພໍ ສົມບູນ ແລ້ວ.

- 오전 9시까지 오시면 돼요.
  ຖ້າມາກ່ອນ 9ໂມງເຊົ້າກໍໄດ້ແລ້ວ (ກໍບໍ່ມີບັນຫາຫຍັງ).
- 여기에서 길을 건너면 됩니다.
  ຂ້າມທາງຢູ່ບ່ອນນີ້ກໍໄດ້.



ຄັ້ງນີ້ ລອງສະແດງບົດບາດເປັນ ຮີຮັນ ແລະ ຕວນ ແລ້ວເວົ້າຕາມບົດສົນທະນາເບິ່ງ. ໄດ້ ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 투안 씨는 무슨 교육을 받아요?
   ຕວນຢາກຮຽນຫຍັງ?
2. 그 수업은 어떻게 신청해요?
   ຕ້ອງລົງທະບຽນຮຽນວິຊານັ້ນແນວໃດ?

정답 1. 자동차 정비 교육을 받아요. 2. 홈페이지에서 신청해요.



# 어휘 2 ຄຳສັບ 2 교육 ການສຶກສາ

ສຳນວນທີ່ກ່ຽວຂ້ອງກັບການສຶກສາມີອັນໃດແດ່ ພວກເຮົາລອງມາຮຽນຮູ້ນຳກັນເບິ່ງບໍ?




교육
ການສຶກສາ




과정
ຫຼັກສູດ



수업
ບົດຮຽນ




과목
ວິຊາຮຽນ




일정
ຕາຕະລາງຮຽນ




기관
ສະຖາບັນ



교실
ຫ້ອງຮຽນ




자격증
ໃບຢັ້ງຢືນ




개강
ເປີດເທີມ




종강
ປິດເທີມ



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 단어를 〈보기〉에서 골라 대화를 완성하세요.
ຈົ່ງເລືອກຄຳສັບທີ່ຖືກຕ້ອງກັບຮູບພາບຈາກ <ກອບ> ແລ້ວຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ.

1) 
가: 어떻게 오셨어요?
ມີວຽກຫຍັງບໍ?
나: 한국어 ________을 듣고 싶어요.

2) 
가: 언제 끝나요? ສຳເລັດເມື່ອໃດ?
나: ________은 4월 30일 이에요.

3) 
가: 어떤 ________이 있어요?
나: 한국, 컴퓨터, 태권도 반이 있어요.
ມີຫ້ອງຮຽນ ເກົາຫຼີ, ຕອມພິວເຕີ້, ເທຄວັນໂດ້ນຳ.

4) 
가: ________은 어디에 있어요?
나: 3층에 있어요. ຢູ່ຊັ້ນ 3.

5) 
가: 언제 ________해요?
나: 다음 주 월요일에 시작해요.
ວັນຈັນ ອາທິດໜ້າແມ່ນເລີ່ມ.

보기: 종강 교실 개강 수업 과정

정답 1) 수업 2) 종강 3) 과정 4) 교실 5) 개강

## 문법 2 ໄວຍາກອນ 2 　 -기 쉽다/어렵다



'-기 쉽다/어렵다' ມັນຊີ້ບອກຄວາມຍາກ ຫຼື ງ່າຍໃນການກະທຳສິ່ງນັ້ນ. ມັນຖືກໃຊ້ຕື່ມທ້າຍຄຳກຳມະເຊິ່ງວ່າ 'ຄຳກຳມະ -기' ແມ່ນຫຍໍ້ມາ ຈາກ 'ຄຳກຳມະ -는 것이' ໃຊ້ຮູບແບບໃດແທນກໍໄດ້.

- 이 한국어 책은 **배우기 쉽고** 재미있어요. ປຶ້ມພາສາເກົາຫຼີເຫຼັ້ມນີ້ ຮຽນງ່າຍທັງມ່ວນ.
- 낮에는 일하고 밤에는 대학원에 **다니기**가 **쉽지** 않아요.
  ຕອນກາງເວັນເຮັດວຽກ ຕອນກາງຄືນໄປຮຽນໂທ ມັນບໍ່ແມ່ນເລື່ອງງ່າຍໆ.

ນອກຈາກ 'ຄຳກຳມະ '-기는 쉽다/어렵다' ແລ້ວ ຄຳຄຸນນາມຄຳອື່ນ ເຊັ່ນ '좋다, 싫다, 편하다, 불편하다' ເປັນຕົ້ນ ກໍສາມາດໃຊ້ໄດ້ຄືກັນ.

- 이곳은 가게가 많아서 **쇼핑하기** 아주 **좋아요**. ການເລາະຊື້ເຄື່ອງຢູ່ນີ້ດີຫຼາຍ ເພາະມີຮ້ານຄ້າຫຼາຍຮ້ານ.
- 이 옷은 단추가 많아서 **입기 불편해요**. ການນຸ່ງເສື້ອຜືນນີ້ບໍ່ສະດວກ ເພາະມີກະດຸມຫຼາຍ.

###  대조적 정보 ການປຽບທຽບ

'ຄຳກຳມະ-기' ໃນພາສາລາວແປວ່າ 'ການ' ແຕ່ໃນເວລາເອົາມານຳໃຊ້ໃນປະໂຫຍກບໍ່ຈຳເປັນຕ້ອງໃສ່ 'ການ' ກໍໄດ້.

- 외국어를 **배우기**가 **쉽다**. ການຮຽນພາສາຕ່າງປະເທດຍາກ.
- 아침에 일찍 **일어나기**가 **어렵다**. ການຕື່ນນອນຕັ້ງແຕ່ເຊົ້າລຳບາກ.



ເຂົ້າໃຈການນຳໃຊ້ '-기 쉽다/어렵다' ແລ້ວບໍ? ສະນັ້ນ ຈົ່ງຊອກຫາສຳນວນທີ່ຖືກຕ້ອງ ເພື່ອຕື່ມໃສ່ບົດສົນທະນາໃຫ້ຄົບຖ້ວນ.

**2. 대화를 읽고 맞는 대답을 고르세요.** ຈົ່ງອ່ານບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ຖືກຕ້ອງ.

1)
가: 저하고 같이 저녁에 컴퓨터 학원에 다닐래요?
ມື້ແລງນີ້ ເຈົ້າຈະໄປໂຮງຮຽນສອນຄອມພິວເຕີນຳຂ້ອຍບໍ?
나: 저녁에는 일을 해야 돼서 ____________________.

① 학원에 다니기 쉬워요 　 ② 학원에 다니기 어려워요

2)
가: 한국어 공부를 하고 싶은데 어떤 책이 좋아요?
ຂ້ອຍຕ້ອງການຮຽນພາສາເກົາຫຼີ, ຄວນຮຽນຈາກປຶ້ມໃດດີ?
나: 이 책을 보세요. ____________________.

① 이 책은 재미있어서 공부하기 쉬워요 　 ② 이 책은 재미있어서 공부하기 어려워요

정답 1) ② 2) ①

## 활동 ກິດຈະກຳ

주말 한국어 교육에 관한 안내문입니다. 잘 읽고 질문에 답하세요.
ແຈ້ງການກ່ຽວກັບການສຶກສາພາສາເກົາຫຼີ ໃນວັນ ເສົາ-ອາທິດ. ຈົ່ງອ່ານໃຫ້ດີ ແລ້ວຕອບຄຳຖາມ.

**외국인 근로자를 위한 주말 한국어 교육**

- 과 정: 한국어 초급, 중급, 고급
- 개 강: 9월 2일
- 종 강: 10월 31일
- 시 간: 매주 토요일 오후 2시~4시
- 교 실: 외국인센터 503호
- 수업료: 무료
- 문 의: 031) 9999-1249 (월~토 오전 9시~오후 6시)

**ການຮຽນພາສາເກົາຫຼີພາກເສົາ-ອາທິດ ສຳລັບແຮງງານຕ່າງປະເທດ**

- ຫຼັກສູດ: ພາສາເກົາຫຼີ ລະດັບຕົ້ນ, ກາງ, ສູງ
- ເປີດເທີມ: ວັນທີ 2 ເດືອນ 9
- ປິດເທີມ: ວັນທີ 31 ເດືອນ 10
- ເວລາ: ທຸກໆວັນເສົາ ຕອນບ່າຍ ເວລາ 2~4ໂມງ
- ຫ້ອງຮຽນ: ສູນຊ່ວຍເຫຼືອຄົນຕ່າງປະເທດ ຫ້ອງ 503
- ຄ່າຮຽນ: ຟຣີ
- ຕິດຕໍ່ສອບຖາມ: 031)9999-1249 (ວັນຈັນ~ເສົາ ຕອນເຊົ້າ 9ໂມງ~ບ່າຍ 6 ໂມງ)

1. 어떤 과정에 대한 안내문입니까? ແຈ້ງການກ່ຽວກັບຫຼັກສູດຫຍັງ?

   ① 요리 수업　② 한국어 수업
   ③ 태권도 수업　④ 컴퓨터 수업

2. 읽은 내용과 같으면 ○, 다르면 X에 표시하세요.
   ຈົ່ງໝາຍ O ໃສ່ຂໍ້ທີ່ຖືກຕ້ອງກັບເນື້ອໃນບົດອ່ານນີ້ ແລະ ໝາຍ X ໃສ່ຂໍ້ທີ່ບໍ່ຖືກກັບເນື້ອໃນບົດອ່ານນີ້.

   1) 돈을 내지 않아도 됩니다.　○　X
   2) 두 달 동안 교육을 받습니다.　○　X
   3) 인터넷으로 강의를 듣습니다.　○　X
   4) 주말 오전에 수업이 있습니다.　○　X

정답 1. ② 2. 1) O 2) O 3) X 4) X

# 외국인 근로자 교육 프로그램

## ໂປຣແກຣມການສຶກສາ ສຳລັບແຮງງານຕ່າງດ້າວ

한국산업인력공단에서는 외국인근로자가 한국에 있는 동안 한국어 및 필요 기능을 습득하여 체류 기간이 끝나면 본국에 안정적으로 재정착할 수 있도록 지원하는 교육프로그램을 제공하고 있습니다. 각 프로그램은 현지 기업과 근로자의 수요 조사를 통해 현지 재취업 혹은 창업에 필요한 과정으로 구성되어 있습니다. 제조업, 건설업, 농축산업, 어업 등 현장에서 실용적이고 안전 관리와 관련된 기초 직무 교육뿐만 아니라 컴퓨터 수리, 자동차 정비, 용접 교육 등 전문기술능력을 향상시키는 프로그램도 포함되어 있는데, 이러한 교육은 한국산업인력공단 홈페이지에서 교육프로그램을 확인한 후 신청하면 체류 기간 동안 누구나 교육을 받을 수 있습니다.

ທີ່ສູນບໍລິການການພັດທະນາຊັບພະຍາກອນມະນຸດເກົາຫຼີ ມີການສະໜອງໂປຣແກຣມການສຶກສາທີ່ຈຳເປັນຕ່າງໆ ລວມເຖິງຫຼັກສູດພາສາເກົາຫຼີ ໃຫ້ແກ່ແຮງງານຕ່າງປະເທດໃນລະຫວ່າງໄລຍະເວລາການເຮັດວຽກຢູ່ເກົາຫຼີ ເພື່ອຮັບປະກັນວ່າ ເວລາທີ່ພວກເຂົາກັບໄປປະເທດຕົນເອງ ແລ້ວຈະຊອກຫາວຽກເຮັດງານທຳໄດ້. ໃນແຕ່ລະໂປຣມ ແກຣມ ແມ່ນຈັດຂຶ້ນໂດຍອີງຕາມການສຳຫຼວດກ່ຽວກັບສະພາບທຸລະກິດ ແລະ ການຈ້າງແຮງງານໃນເຂດທ້ອງຖິ່ນສະເພາະແລ້ວ ຈຶ່ງມີການສ້າງຫຼັກສູດຂຶ້ນມາໃຫ້ສອດຄ່ອງກັບຄວາມຮຽກຮ້ອງຕ້ອງການ. ໃນໂປຣແກຣມການຝຶກອົບຮົມຍັງບໍ່ທັນພຽງ ມີພຽງແຕ່ອຸດສາຫະກຳໂຮງຈັກໂຮງງານ, ກໍ່ສ້າງ, ການກະສິກຳ ແລະ ການປະມົງເທົ່ານັ້ນ ແຕ່ຍັງມີຫຼັກສູດການແປງຄອມພິວເຕີ, ການຮັກສາບຳລຸງລົດຍົນ.

### 교육 프로그램 신청 ການລົງທະບຽນໂປຣແກຣມການສຶກສາ

1) 한국산업인력공단 홈페이지(http://eps.hrdkorea.or.kr)에서 교육 프로그램 리스트를 검색하세요. (나에게 맞는 교육 프로그램 찾기)
   ຈົ່ງຊອັຫາລາຍການໂປຣແກຣມການສຶກສາ ຢູ່ທີ່ໂຮມເພຈ (http://eps.hrdkorea.or.kr) ຂອງສູນບໍລິການການພັດທະນາຊັບພະຍາກອນມະນຸດເກົາຫຼີ. (ການຊອກຫາໂປຣແກຣມການສຶກສາທີ່ເໝາະກັບຕົນເອງ)
2) 각 과정별 교육 조건을 확인하세요.
   (신청 자격, 신청 시기, 교육 시기, 교육 기관, 수료 조건 등)
   ກະລຸນາ ຢືນຢັນເງື່ອນໄຂການສຶກສາຂອງແຕ່ລະຫຼັກສູດ.
   (ເງື່ອນໄຂລົງທະບຽນ, ເວລາລົງທະບຽນ, ສະຖາບັນການສຶກສາ, ເງື່ອນໄຂການສຳເລັດ ການສຶກສາ ແລະ ອື່ນໆ)
3) 신청하기 버튼을 클릭하여 본인의 인적사항을 기재한 후 전송하세요.
   ກົດທີ່ປຸ່ມ 신청하기(ສະໝັກ), ຫຼັງຈາກນັ້ນຕື່ມຂໍ້ມູນສ່ວນຕົວແລ້ວສົ່ງ.
4) 사이트 방문 혹은 이메일을 통해 교육대상자로 선정되었는지 확인하세요.
   ກວດເບິ່ງວ່າທ່ານຖືກເລືອກໃຫ້ເປັນເປົ້າໝາຍ ຜູ້ທີ່ຈະໄດ້ຮັບການສຶກສາ ຫຼືບໍ່ ຜ່ານທາງເວັບໄຊ້ ຫຼື ອີເມວ.
5) 시간과 장소를 확인하여 교육에 참여하세요.
   ຈົ່ງກວດເບິ່ງເວລາ ແລະ ສະຖານທີ່ ແລ້ວເຂົ້າຮ່ວມການຝຶກອົບຮົມ.





## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ຫາ 3 ແມ່ນເປັນຄຳຖາມກ່ຽວກັບການຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ. ກ່ອນການຟັງຄຳຖາມ ຈົ່ງກວດເບິ່ງເນື້ອໃນຂອງຄຳຕອບກ່ອນ.

[1~3] 질문을 듣고 알맞은 대답을 고르십시오.
ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.




1. ① 열심히 공부했어요.
   ② 인터넷 강의를 들어요.
   ③ 한국어는 조금 어려워요.
   ④ 한국어 공부를 열심히 해야 돼요.

2. ① 수업은 저녁 7시에 시작돼요.
   ② 저는 매일 예습하고 복습해요.
   ③ 저녁에는 학원에 가기 어려워요.
   ④ 어제 저녁에 학원에서 만났어요.

3. ① 고급 과정은 없어요.
   ② 10월 31일에 끝나요.
   ③ 다음 주 월요일이에요.
   ④ 외국어교육센터 503호예요.



ຕໍ່ໄປແມ່ນເປັນຄຳຖາມກ່ຽວກັບການຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ. ກ່ອນການຟັງຄຳຖາມ ຈົ່ງກວດເບິ່ງເນື້ອໃນຂອງຄຳຕອບເທື່ອໜຶ່ງກ່ອນ.

[4~5] 하나의 이야기를 듣고 두 개의 질문에 대답하십시오.
ຈົ່ງຟັງບົດສົນທະນາໜຶ່ງບົດ ແລ້ວຕອບຄຳຖາມ 2 ຂໍ້.

4. 남자는 왜 전화를 했습니까? ເປັນຫຍັງຜູ້ຊາຍຄົນນັ້ນ ຈຶ່ງໄດ້ໂທລະສັບ?
   ① 한국어 책을 사고 싶어서　② 한국어를 공부하고 싶어서
   ③ 한국 친구를 사귀고 싶어서　④ 토요일에 한국어 시험이 있어서

5. 한국어 초급반 수업은 언제 있습니까? ຫ້ອງຮຽນ ພາສາເກົາຫຼີ ລະດັບຕົ້ນແມ່ນເວລາໃດ?
   ① 토요일 10:00~12:00　② 토요일 10:00~13:00
   ③ 토요일 11:00~13:00　④ 토요일 11:00~14:00



### 듣기 대본 ເນື້ອໃນບົດຟັງ

1. 여: 투안 씨는 한국어 공부를 어떻게 해요? ຕວນ ຮຽນພາສາເກົາຫຼີແນວໃດ?
2. 남: 모니카 씨, 저녁에 같이 학원에 다닐래요? ໂມນິກາ, ຕອນແລງໄປໂຮງຮຽນນຳກັນບໍ່?
3. 남: 개강이 언제예요? ເປີດເທີມມື້ໃດ?

4-5. 여: 여보세요. 한국어교육센터입니다. ສະບາຍດີ. ສູນການສຶກສາພາສາເກົາຫຼີ.

남: 저, 한국어능력시험 준비 과정이 있어요?
ຢູ່ນັ້ນ ມີຫຼັກສູດກຽມ ສອບເສັງວັດລະດັບຄວາມສາມາດພາສາເກົາຫຼີບໍ່?

여: 네, 초급반하고 중급반이 있어요. ເຈົ້າ, ມີທັງລະດັບຕົ້ນ ແລະ ລະດັບກາງ.

남: 초급반 수업은 몇 시에 해요? ຫ້ອງຮຽນລະດັບຕົ້ນ ຮຽນເວລາຈັກໂມງ?

여: 토요일 오전 10시부터 오후 1시까지예요. ວັນເສົາ ເລີ່ມແຕ່ 10 ໂມງເຊົ້າເຖິງ 1 ໂມງຕອນບ່າຍ.

정답 1. ② 2. ③ 3. ③ 4. ② 5. ②

## 확장 연습 ບົດເຝິກຫັດເພີ່ມເຕີມ



[1~2] 질문을 듣고 알맞은 대답을 고르십시오. ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

1. ① 두 시에 할 거예요. ② 아주 안전할 거예요.
   ③ 내일 하기로 했어요. ④ 센터에서 하기로 했어요.

2. ① 네, 강의를 신청하고 싶어요. ② 네, 인터넷으로 물건을 사요.
   ③ 네, 저녁마다 강의를 들어요. ④ 네, 매일 인터넷 검색을 해요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 내일 안전 교육은 어디에서 해요? ການສຶກສາກ່ຽວກັບ ຄວາມປອດໄພມື້ອື່ນ ແມ່ນຈັດຂຶ້ນຢູ່ໃສ?
2. 남: 흐엉 씨, 매일 인터넷으로 강의를 들어요? ເຮືອງ, ເຈົ້າມີຮຽນຜ່ານອິນເຕີເນັດທຸກມື້ບໍ່?

정답 1. ④ 2. ③



## 발음 ການອອກສຽງ



### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ພະຍັນຊະນະລົງທ້າຍທີ່ອອກສຽງໃນພາສາເກົາຫຼີ ແມ່ນມີຈຳນວນຈຳກັດ. ຢູ່ໃນທີ່ນີ້ ແມ່ນມີພຽງແຕ່ 7 ພະຍັນຊະນະເທົ່ານັ້ນທີ່ສາມາດອອກສຽງໄດ້. ສຽງທີ່ເປັນລົມອອກມາ ຫຼື ສຽງຈາກເພດານປາກ ເຊັ່ນ 'ㄷ[t], ㅌ[tʰ], ㅅ[s], ㅆ[s'], ㅈ[tʃ], ㅊ[tʃʰ]' ແມ່ນສຽງຈະບໍ່ຫາຍໄປຄືກັບຕົວສະກົດອື່ນໆ ແລະ ອອກສຽງເປັນ [ㄷ].

(1) 솥, 밭, 옷, 닫다, 돋보기, 있다

(2) 낫 : 낮 : 낯

(3) 빗 : 빚 : 빛

(4) 솥도 커요.

(5) 가게에는 옷도 있다.



## 어휘 2 ຄຳສັບ 2 은행 업무/현금인출기 ວຽກງານທະນາຄານ/ຕູ້ເອທີເອັມ



ລອງມາເບິ່ງວ່າສຳນວນທີ່ກ່ຽວກັບ ວຽກງານທະນາຄານ/ຕູ້ເອທີເອັມມີຄືແນວໃດ.



송금하다
ໂອນເງິນ

입금하다
ຝາກເງິນ




현금인출기 (ATM)
ຕູ້ເອທີເອັມ




출금하다
ຖອນເງິນ




계좌 이체
ການໂອນບັນຊີ




잔액 조회
ການສອບຖາມຍອດເງິນຍັງເຫຼືອ




통장 정리
ການອັບເດດຂໍ້ມູນປຶ້ມບັນຊີທະນາຄານ






대출하다
ຢືມເງິນ, ກູ້ເງິນ



환전하다
ແລກປ່ຽນເງິນ

- **현금인출기**에서 **통장 정리**를 할 수 있어요.
  ພວກເຮົາສາມາອັບເດດປຶ້ມບັນຊີທະນາຄານທີ່ຕູ້ເອທີເອັມ.
- **대출하려면** 은행에 직접 가야 해요.
  ຖ້າຕ້ອງການຢືມເງິນ, ພວກເຮົາຕ້ອງໄປທີ່ທະນາຄານ.



ຈົ່ງຄຶດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요.
   ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




1)



2)



3)




4)

보기 환전하다 입금하다 출금하다 송금하다

정답 1) 입금하다 2) 송금하다 3) 환전하다 4) 출금하다

## 문법 2 ໄວຍາກອນ 2 -(으)면 되다



'-(으)면 되다' ມັນຊີ້ບອກວ່າ ຂໍພຽງແຕ່ເກີດມີການກະທຳໃດໜຶ່ງ ຫຼື ເກີດມີສະພາບໃດໜຶ່ງກໍຖືວ່າ ບໍ່ມີບັນຫາຫຍັງ ຫຼື ພຽງພໍແລ້ວ.

| 자음(ພະຍັນຊະນະ) → **-으면 되다** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-면 되다** |
|---|---|
| 먹다 → 먹**으면 되다** | 사다 → 사**면 되다**<br>살다 → 살**면 되다** |

- 가: 고향으로 송금하고 싶은데 어떻게 해야 돼요? ຂ້ອຍຢາກສົ່ງເຄື່ອງໄປບ້ານເກີດຕ້ອງເຮັດແນວໃດ?
  나: 여기 신청서를 **쓰시면 됩니다.** ມີແຕ່ຂຽນໃບສະໝັກນີ້ ກໍແລ້ວໆ.
- 가: 이 약은 어떻게 먹어요? ຢານີ້ ກິນແນວໃດ?
  나: 하루에 2번 **먹으면 돼요.** (ໃຫ້) ກິນມື້ລະ 2 ເທື່ອເດີ.



ເຂົ້າໃຈການນຳໃຊ້ '-(으)면 되다' ແລ້ວບໍ? ສະນັ້ນ, ຈົ່ງເຊື່ອມໂຍງຄຳຖາມ ໃສ່ຄຳຕອບທີ່ຖືກຕ້ອງ.

2. 다음을 연결해서 대화를 완성하세요. ຈົ່ງເຊື່ອມໂຍງຄຳຖາມ ໃສ່ຄຳຕອບທີ່ຖືກຕ້ອງ ແລ້ວເຮັດໃຫ້ບົດສົນທະນາຄົບຖ້ວນ.

① 가: 은행이 어디에 있어요? • • ㉠ 나: 동생 것만 사면 돼요.

② 가: 가족 선물은 다 샀어요? • • ㉡ 나: 잠깐만요. 이것만 하면 돼요.

③ 가: 이 약은 어떻게 먹어요? • • ㉢ 나: 하루에 두 번 먹으면 돼요.

④ 가: 우리 이제 퇴근할까요? • • ㉣ 나: 이쪽으로 쭉 가면 돼요.



정답 ①㉣ ②㉠ ③㉢ ④㉡



ລອງມາຮຽນຮູ້ນຳກັນຕື່ມບໍ? ຈົ່ງຕື່ມປະໂຫຍກຕໍ່ໄປນີ້ໃຫ້ຄົບຖ້ວນ ໂດຍການໃຊ້ '-(으)면 되다'.

약을 먹다　　택시를 타다　　다음 역에서 내리다

1. 시장에 가려고 하면 ____________________.
2. 감기에 걸리면 ____________________.
3. 시간이 없으면 ____________________.

정답 1. 다음 역에서 내리면 돼요 2. 약을 먹으면 돼요 3. 택시를 타면 돼요

# 활동 ກິດຈະກຳ

1. 은행에 가서 〈보기〉처럼 이야기해 보세요.
   ຈົ່ງສ້າງບົດສົນທະນາເວລາໄປທີ່ທະນາຄານ ຄືດັ່ງຕົວຢ່າງ.







입금하다 ຝາກເງິນ

신청서를 쓰다
ຂຽນໃບສະໝັກ

가: 어떻게 오셨습니까?
ມີຫຍັງໃຫ້ຊ່ວຍບໍ?
나: 입금하려고 왔어요.
ຂ້ອຍມາທີ່ນີ້ເພື່ອຝາກເງິນ.
가: 신청서를 쓰시면 됩니다.
ກະລຸນາຂຽນໃບສະໝັກ.

1)




출금하다
ຖອນເງິນ

현금인출기를 이용하다
ໃຊ້ຕູ້ເອທີເອັມ

2)



통장을 만들다
ເປີດບັນຊີທະນາຄານ

신청서를 쓰고 신분증을 주다
ຂຽນໃບສະໝັກ
ພ້ອມກັບເອົາບັດປະຈຳຕົວໃຫ້

3)



송금하다
ໂອນເງິນ

여기에 계좌번호를 쓰다
ຂຽນເລກບັນຊີທະນາຄານຢູ່ບ່ອນນີ້

4)

통장 정리

통장 정리를 하다
ອັບເດດຂໍ້ມູນປຶ້ມບັນຊີທະນາຄານ

여기에 통장을 넣다
ໃສ່ປຶ້ມບັນຊີທະນາ
ຄານເຂົ້າໄປບ່ອນນີ້

정답 1) 가: 어떻게 오셨습니까?
나: 출금하려고 왔어요.
가: 현금인출기를 이용하시면 됩니다.
2) 가: 어떻게 오셨습니까?
나: 통장을 만들려고 왔어요.
가: 신청서를 쓰고 신분증을 주시면 됩니다.
3) 가: 어떻게 오셨습니까?
나: 송금하려고 왔어요.
가: 여기에 계좌번호를 쓰시면 됩니다.
4) 가: 어떻게 오셨습니까?
나: 통장 정리를 하려고 왔어요.
가: 여기에 통장을 넣으시면 됩니다.

# 외국인 근로자 전용 금융 서비스

## ການບໍລິການທຸລະກຳການເງິນ ສຳລັບແຮງງານຕ່າງປະເທດ

은행에서 외국인 고객을 위한 맞춤서비스가 늘어가고 있습니다. 국내에서 직장 생활을 하면서 월급을 고향으로 송금하는 외국인 근로자들을 위해 송금 수수료를 할인해 주기도 하고 보통 하루 정도 걸리는 해외 송금을 10분으로 줄인 해외 송금 서비스를 제공하기도 합니다. 그리고 울산이나 거제 지역 등 외국인 근로자가 많이 사는 지역을 중심으로 외국인 전용 상담 창구를 설치한 은행도 있습니다. 또한 8개 외국어를 지원하는 현금인출기를 설치하고 24시간 온라인 해외 송금과 외국어 상담 서비스도 실시하고 있습니다. 또 평일에 은행에 가기 힘든 외국인 고객을 위해 일요일에 영업을 하는 은행도 있습니다.

ຢູ່ທະນາຄານ ເພື່ອຕອບສະໜອງຄວາມຕ້ອງການຂອງລູກຄ້າຄົນຕ່າງປະເທດ ແມ່ນນັບມື້ນັບ ເພີ່ມຂຶ້ນ. ສຳລັບແຮງງານຕ່າງປະເທດ ທີ່ເຮັດວຽກຢູ່ປະເທດເກົາຫຼີ ແລ້ວສົ່ງເງິນກັບບ້ານ, ຕາມທະ ນາຄານຕ່າງໆ ແມ່ນມີການໃຫ້ບໍລິການຫຼຸດລາຄາອັດຕາການໂອນເງິນຂ້າມປະເທດ ຫຼື ບາງທະນາຄານກໍມີຄວາມພະຍາຍາມເຮັດໃຫ້ໄລຍະເວລາທີ່ໃຊ້ໃນການໂອນເງິນຂ້າມປະເທດສັ້ນລົງ ເຊັ່ນ ຈາກປົກກະຕິໃຊ້ເວລາປະມານໜຶ່ງມື້ ມາເປັນ 10 ນາທີກໍມີ. ໂດຍສະເພາະ ທ້ອງຖິ່ນທີ່ມີແຮງງານ ຕ່າງປະເທດຫຼາຍ ເຊັ່ນ: ເຂດອູລຊານ ຫຼື ກໍແຈ ກໍມີບາງທະນາຄານທີ່ມີບໍລິການການໃຫ້ຄຳປຶກສາ ສຸມໃສ່ແຮງງານຕ່າງປະເທດສະເພາະ. ນອກຈາກນີ້, ໃນຕູ້ ເອທີເອັມກໍຍັງມີເຖິງ 8 ພາສາຕ່າງປະເທດ ໃຫ້ເລືອກ ລວມເຖິງການເປີດບໍລິການໂອນເງິນຂ້າມປະເທດ 24 ຊົ່ວໂມງ ແລະ ການບໍລິການໃຫ້ຄຳ ປຶກສາເປັນພາສາຕ່າງປະເທດນຳອີກ. ພ້ອມນີ້ ຍັງມີບາງທະນາຄານທີ່ເປີດໃຫ້ບໍລິການວັນອາທິດ ເນື່ອງຈາກມີຄົນຕ່າງປະເທດຫຼາຍຄົນ ທີ່ບໍ່ມີເວລາໄປທະນາຄານໄດ້ໃນວັນລັດຖະການທຳມະດາ.








# EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ຫາ 3 ແມ່ນຄຳຖາມກ່ຽວກັບ ການເບິ່ງຮູບພາບແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ. ຈົ່ງກວດເບິ່ງຄຳຖາມກ່ອນຟັງ.

[1~3] 다음 그림을 보고 알맞은 대답을 고르십시오.

ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

Track 90

1. 이것은 무엇입니까? ອັນນີ້ແມ່ນຫຍັງ?

   ①　②　③　④

2. 여기에서 무엇을 할 수 있습니까? ມີຫຍັງໃຫ້ພວກເຮົາຊ່ວຍໄດ້ບໍ?

   ①　②　③　④

3. 이 사람은 무엇을 합니까? ຄົນຜູ້ນີ້ເຮັດຫຍັງ?

   ①　②　③　④



ຂໍ້ 4 ແລະ 5 ແມ່ນຄຳຖາມກ່ຽວກັບການຟັງບົດສົນທະນາບົດໜຶ່ງແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ. ຈົ່ງກວດເບິ່ງຄຳຖາມເທື່ອໜຶ່ງກ່ອນຟັງ.

[4~5] 하나의 이야기를 듣고 두 개의 질문에 대답하십시오.

ຈົ່ງຟັງບົດສົນທະນາໜຶ່ງບົດ ແລ້ວຕອບຄຳຖາມ 2 ຂໍ້.

4. 오늘은 무슨 요일입니까? ມື້ນີ້ແມ່ນວັນຫຍັງ?

   ① 월요일　② 수요일

   ③ 토요일　④ 일요일

5. 남자는 왜 은행에 갑니까? ເປັນຫຍັງຜູ້ຊາຍຈຶ່ງໄປທະນາຄານ?

   ① 환전하려고　② 친구를 만나려고

   ③ 통장을 만들려고　④ 고향에 돈을 보내려고



### 듣기 대본 ເນື້ອໃນບົດຟັງ

1. ① 여: 통장입니다. ມັນແມ່ນປຶ້ມບັນຊີທະນາຄານ.
   ② 여: 창구입니다. ມັນແມ່ນເຄົາເຕີ.
   ③ 여: 신용카드입니다. ມັນແມ່ນບັດເຄດິດ.
   ④ 여: 현금인출기입니다. ມັນແມ່ນຕູ້ເອທີເອັມ.
2. ① 남: 환전할 수 있습니다. ສາມາດແລກປ່ຽນເງິນໄດ້.
   ② 남: 약을 살 수 있습니다. ສາມາດຊື້ຢາໄດ້.
   ③ 남: 편지를 보낼 수 있습니다. ສາມາດສົ່ງຈົດໝາຍໄດ້.
   ④ 남: 수업을 들을 수 있습니다. ສາມາດຮຽນວິຊານີ້ໄດ້.
3. ① 여: 집을 청소합니다. ທຳຄວາມສະອາດເຮືອນ.
   ② 여: 식당에서 돈을 냅니다. ຈ່າຍເງິນຢູ່ທີ່ຮ້ານອາຫານ.
   ③ 여: 은행에서 돈을 찾습니다. ຖອນເງິນຢູ່ທີ່ທະນາຄານ.
   ④ 여: 이름과 주소를 씁니다. ຂຽນຊື່ ແລະ ທີ່ຢູ່.

4-5. 여: 어디 가세요? ເຈົ້າຈະໄປໃສ?

남: 은행에 가요. 고향에 송금하려고요. ຂ້ອຍຈະໄປທະນາຄານ ເພື່ອໂອນເງິນໄປບ້ານຂອງຂ້ອຍ.

여: 은행에요? 오늘은 일요일인데 고향으로 송금할 수 있어요?
ທະນາຄານຫວາ? ແຕ່ວ່າ ມື້ນີ້ແມ່ນວັນອາທິດໃດ່, ເຈົ້າສາມາດໂອນເງິນໄດ້ບໍ?

남: 네, 우리 동네 은행은 일하는 외국인들이 많아서 일요일에도 문을 열어요.
ເຈົ້າ, ຍ້ອນວ່າຢູ່ຄຸ້ມບ້ານເຮົາແມ່ນມີແຮງງານຕ່າງປະເທດຫຼາຍ ທະນາຄານເລີຍເປີດວັນອາທິດນຳ.

정답 1. ④ 2. ① 3. ③ 4. ④ 5. ④

## 확장 연습 ບົດເຝິກຫັດເພີ່ມເຕີມ

L-28

1. 대화를 듣고 질문에 알맞은 것을 고르십시오.
   ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   여자는 왜 여기에 왔습니까? ເປັນຫຍັງແມ່ຍິງຄົນນັ້ນ ຈຶ່ງມາບ່ອນນີ້?

   ① 여권을 만들려고 ② 통장을 만들려고
   ③ 신용카드를 만들려고 ④ 외국인 등록증을 만들려고

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 어떻게 오셨습니까? ມີຫຍັງໃຫ້ຊ່ວຍບໍ?
   여: 통장하고 체크카드를 만들려고 왔어요. ຂ້ອຍມາເພື່ອເຮັດ ປຶ້ມບັນຊີທະນາຄານ ແລະ ບັດທະນາຄານ.
   남: 그러시면 외국인 등록증이나 여권을 좀 보여 주세요. 그리고 여기 신청서를 쓰시고 서명해 주세요.
   ຖ້າເປັນແບບນັ້ນແມ່ນ ກະລຸນາເອົາບັດຄົນຕ່າງດ້າວ ຫຼື ໜັງສືຜ່ານແດນໃຫ້ເບິ່ງແນ່. ແລະ ຂຽນແບບຟອມສະໝັກນີ້ແລ້ວ ເຊັນນຳ.

정답 1. ②



## EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ 2 ແມ່ນຄຳຖາມກ່ຽວກັບ ການເບິ່ງຮູບພາບ ແລ້ວເລືອກເອົາສຳນວນທີ່ຖືກຕ້ອງ.
ລອງຄິດທົບທວນ ເຖິງສິ່ງທີ່ຮຽນມາ ແລ້ວຕອບຄຳຖາມ.

**[1~2] 다음 그림을 보고 맞는 문장을 고르십시오.**
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1. 

① 통장입니다. ② 신분증입니다.
③ 신용카드입니다. ④ 휴대 전화입니다.

2. 

① 은행에 갑니다. ② 서명을 합니다.
③ 돈을 찾습니다. ④ 통장 정리를 합니다.



ຂໍ້ 3 ຫາ 5 ແມ່ນຄຳຖາມກ່ຽວກັບການເລືອກເອົາຄຳຕອບ ທີ່ຖືກຕ້ອງຕື່ມໃສ່ຊ່ອງຫວ່າງຂອງບົດສົນທະນາ.
ຈົ່ງອ່ານບົດສົນທະນາໃຫ້ດີ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

**[3~5] 빈칸에 들어갈 가장 알맞은 것을 고르십시오.**
ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.
가: 몽골로 ______________ 하려고 해요. ຂ້ອຍຕ້ອງການ ໂອນເງິນໄປປະເທດມົງໂກນ.
나: 얼마나 보내실 거예요? ຈະໂອນເງິນຈຳນວນເທົ່າໃດ?

① 가입 ② 송금 ③ 조회 ④ 정리

4.
저는 월급을 받으면 ______________에 가서 입금을 하고 고향으로 돈도 보냅니다.
ຖ້າຂ້ອຍໄດ້ເງິນເດືອນ, ຂ້ອຍຈະໄປທີ່ ທະນາຄານ ເພື່ອຝາກເງິນ ແລ້ວໂອນເງິນໄປບ້ານເກີດຂອງຂ້ອຍ.

① 은행 ② 병원 ③ 우체국 ④ 도서관

5.
가: 한국 돈을 베트남 돈으로 바꾸고 싶어요.
ຂ້ອຍຕ້ອງການແລກເງິນເກົາຫຼີ ເປັນເງິນຫວຽດນາມ.
나: ______________을 하려면 회사 앞에 있는 은행에 가 보세요. 저도 거기에서 했는데 수수료가 별로 안 들었어요.
ຖ້າຕ້ອງການແລກປ່ຽນເງິນ, ລອງໄປທະນາຄານທີ່ຕັ້ງຢູ່ໜ້າບໍລິສັດເບິ່ງ. ຂ້ອຍເຄີຍປ່ຽນເງິນຢູ່ນັ້ນແລ້ວ ແມ່ນບໍ່ໄດ້ເສຍຄ່າທຳນຽມຫຼາຍປານໃດ.

① 입금 ② 출금 ③ 환전 ④ 대출

정답 1. ② 2. ② 3. ② 4. ① 5. ③



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~4] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1.

고향에 있는 가족들에게 ________을/를 하려고 은행에 갔습니다. 가족들에게 생활비를 보낼 때 기분이 참 좋습니다.

ຂ້ອຍໄດ້ໄປທະນາຄານເພື່ອໂອນເງິນໃຫ້ຄອບຄົວຢູ່ທາງບ້ານ. ເວລາທີ່ຂ້ອຍສົ່ງເງິນໄປໃຫ້ຄອບຄົວໃຊ້ຈ່າຍ, ຂ້ອຍ ອາລົມດີຫຼາຍ.

① 전화 ② 송금 ③ 안내 ④ 인출

2.

점심시간에 은행에 가서 달러를 한국 돈으로 ________. 모두 삼백 달러를 바꾸었습니다.

ໃນເວລາພັກກິນເຂົ້າທ່ຽງ, ຂ້ອຍໄດ້ໄປທະນາຄານ ເພື່ອແລກປ່ຽນເງິນຈາກ ເງິນໂດລາ ເປັນເງິນວອນ. ໄດ້ປ່ຽນເງິນທັງໝົດຈຳນວນ ສາມຮ້ອຍໂດລາ.

① 대출했습니다 ② 송금했습니다 ③ 입금했습니다 ④ 환전했습니다

3.

어제 통장을 ________ 은행에 갔습니다. 카드가 있으면 좋을 것 같아서 체크카드도 신청했습니다.

ມື້ວານນີ້, ຂ້ອຍໄດ້ໄປທະນາຄານ ເພື່ອເຮັດປຶ້ມບັນຊີທະນາຄານ. ຖ້າຂ້ອຍມີບັດກໍຄືຈະດີ, ຂ້ອຍເລີຍໄດ້ສະໝັກເຮັດບັດທະນາຄານນຳ.

① 뽑아서 ② 만들어서 ③ 뽑으려고 ④ 만들려고

4.

고향으로 돈을 송금할 때 현금인출기를 이용하면 편리합니다. 은행 카드나 통장을 넣고 송금 버튼을 ________.

ຖ້າໃຊ້ຕູ້ເອທີເອັມ ເວລາໂອນເງິນໃຫ້ຄອບຄົວ ຢູ່ທາງບ້ານ ແມ່ນມີຄວາມສະດວກສະບາຍ. ພຽງແຕ່ໃສ່ບັດ ຫຼື ປຶ້ມທະນາຄານ ແລ້ວກົດປຸ່ມໂອນເງິນ ກໍໄດ້ແລ້ວ.

① 바꾸면 됩니다 ② 누르면 됩니다 ③ 바꿀 수 있습니다 ④ 누를 수 있습니다







### ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.

ໃນພາສາເກົາຫຼີແມ່ນມີສຽງ ‘ㄹ’ ພຽງສຽງດຽວ. ສຽງ ‘ㄹ’ ນີ້ແມ່ນຈະອອກສຽງເປັນ [ຣ] ໃນເວລາທີ່ມັນຢູ່ລະຫວ່າງກາງຂອງສະຫຼະ, ແຕ່ຄຳທີ່ຢູ່ທ້າຍພະຍາງແມ່ນ ອອກສຽງ [ລ]. ເຖິງຢ່າງໃດກໍຕາມ, ໃນກໍລະນີທີ່ ‘ㄹ’ ເປັນຕົວສະກົດຂອງພະຍາງ ແລະ ຕາມຫຼັງພະຍາງນັ້ນແມ່ນສະຫຼະ, ‘ㄹ’ ຈະອອກສຽງເປັນ [ຣ] ຂອງພະຍາງຕໍ່ໄປ.

(1) 다리, 우리, 노래 (2) 달, 말, 쌀, 하늘 (3) 달이, 말에, 빨아서



# 필리핀으로 엽서를 보내고 싶은데요
ຂ້ອຍຢາກສົ່ງບັດອວຍພອນນີ້ ໄປຟີລິປິນ

**학습 안내**
ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການສົ່ງຈົດໝາຍ, ການຮ້ອງຂໍ |
| □ ໄວຍາກອນ | (으)로, -(으)십시오 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ການສົ່ງໄປສະນີ, ວັດສະດຸ/ການສົ່ງເຄື່ອງ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ບໍລິການສົ່ງດ່ວນລະຫວ່າງປະເທດ |



## 대화 1 ບົດສົນທະນາ 1


Track 91



ໂມນິຄາ ໄດ້ໄປທີ່ ໄປສະນີ. ກ່ອນອື່ນຟັງບົດສົນທະນາ 2 ຄັ້ງ ແລ້ວເວົ້າຕາມ.

우체국 직원 어떻게 오셨습니까?
ມີຫຍັງໃຫ້ຊ່ວຍບໍ?

모니카 엽서를 보내고 싶은데요.
ຂ້ອຍຢາກສົ່ງບັດອວຍພອນ.

우체국 직원 어디로 보내실 겁니까?
ຕ້ອງການສົ່ງໄປໃສບໍ?

모니카 필리핀으로 보낼 겁니다.
ຕ້ອງການສົ່ງໄປຟີລິບປິນ.

우체국 직원 엽서를 여기에 올려놓으세요. 그런데 받는 사람의 우편번호가 없네요. 우편번호를 쓰세요.
ກະລຸນາວາງບັດອວຍພອນໄວ້ບ່ອນນີ້. ແຕ່ວ່າ ບໍ່ມີທີ່ຢູ່ຂອງຜູ້ຮັບ ກະລຸນາຂຽນລະຫັດໄປສະນີຂອງເຈົ້າໃສ່ແດ່.

**어떻게 오셨습니까?**
ມີຫຍັງໃຫ້ຊ່ວຍບໍ?
1. ໃຊ້ຖາມໃນເວລາຖາມກ່ຽວກັບເຫດຜົນ.
- 가: 어떻게 오셨습니까?
  ມານີ້ ຕ້ອງການຫຍັງບໍ?
  나: 배가 아파서 왔어요.
  ເພາະວ່າ ເຈັບທ້ອງຈຶ່ງມາ.
2. ໃຊ້ຖາມໃນເວລາຖາມກ່ຽວກັບການຄົມມະນາຄົມ.
- 가: 여기까지 어떻게 오셨습니까?
  ມາຮອດທີ່ນີ້ມີວຽກຫຍັງບໍ?
  나: 지하철로 왔어요.
  ມາເພື່ອຂີ່ລົດໄຟໃຕ້ດິນ.

**-(으)ㄹ 겁니까/겁니다**
- ຈະ......
'-(으)ㄹ 거예요' ມີຄວາມໝາຍຄືກັນກັບ ຈະ.......
ສ່ວນໃຫຍ່ແລ້ວໃຊ້ໃນທາງການ.
- 우리 회사는 앞으로 더욱 발전할 겁니다.
  ປີໜ້າບໍລິສັດຂອງພວກເຮົາຍິ່ງຈະພັດທະນາຂຶ້ນໄປອີກ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 모니카 씨는 왜 우체국에 갔어요? ເປັນຫຍັງ ໂມນິກາຈຶ່ງໄປທີ່ໄປສະນີ?
2. 모니카 씨는 엽서를 어디로 보낼 겁니까? ໂມນິກາຈະສົ່ງບັດອວຍພອນໄປໃສ?

정답 1. 엽서를 보내려고 우체국에 갔어요.
2. 필리핀으로 보낼 겁니다.



##  어휘 1 ຄຳສັບ 1 우편물 ພັດສະດຸ



ພັດສະດຸ ແລະ ເຮົາມາຮຽນຮູ້ຄຳສັບທີ່ກ່ຽວຂ້ອງນຳກັນລອງເບິ່ງບໍ?

|  |  |  |  |
|---|---|---|---|
| 편지<br>ຈົດໝາຍ | 편지 봉투<br>ຊອງຈົດໝາຍ | 엽서<br>ບັດອວຍພອນ | 카드<br>ຄາດ໌, ບັດ |
|  |  |  | |
| 편지를 쓰다<br>ຂຽນຈົດໝາຍ | 우표를 붙이다<br>ສະແຕມ | 편지를 보내다<br>ສົ່ງຈົດໝາຍ | |

- 외국에 있는 친구에게 **편지를 보냈어요.** ສົ່ງຈົດໝາຍໃຫ້ເພື່ອຢູ່ຕ່າງປະເທດ.
- 친구가 나에게 크리스마스 **카드를 보냈습니다.** ເພື່ອນຂອງຂ້ອຍສົ່ງບັດອວຍພອນວັນຄຣິດສະມາດໃຫ້ຂ້ອຍ.



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

1. 그림을 보고 알맞은 말을 연결하세요. ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳເວົ້າທີ່ເໝາະສົມ.

① ② ③ ④ ⑤

㉠ 이메일 ㉡ 엽서 ㉢ 우표 ㉣ 카드 ㉤ 편지

정답 ① ㉤ ② ㉣ ③ ㉡ ④ ㉢ ⑤ ㉠

## 문법 1 ໄວຍາກອນ 1 (으)로

G29-1

'(으)로' ມັນຊີ້ບອກເຖິງຈຸດປະສົງ ຫຼືຫຼື ທິດທາງຂອງການກະທຳ. ມັນໃຊ້ໄດ້ແຕ່ກັບຄຳນາມເທົ່ານັ້ນ.

| 자음(ພະຍັນຊະນະ) + **으로** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' + **로** |
|---|---|
| 한국**으로** | 라오스**로**<br>서울**로** |

- 가: 어디**로** 가세요? ເຈົ້າຈະໄປໃສ?
  나: 비엔티안**으로** 갑니다. ໄປນະຄອນຫຼວງວຽງຈັນ.
- 내일 한국**으로** 갑니다. ມື້ອື່ນ ຂ້ອຍຈະໄປເກົາຫຼີ.
- 오른쪽**으로** 돌아가세요. ກະລຸນາ ລ້ຽວໄປທາງຂວາ.



### 비교해 보세요 ຈົ່ງປຽບທຽບລອງເບິ່ງ

✔ ລະຫວ່າງ **'(으)로'** ທີ່ຊີ້ບອກຈຸດໝາຍປາຍທາງກັບ **'에'** ທີ່ຊີ້ບອກສະຖານທີ່.

'(으)로' ກັບ '에' ມັນໃຊ້ຊີ້ບອກທິດທາງຂອງການກະທຳໄດ້ທັງສອງ. '에' ໃຊ້ຊີ້ບອກເຖິງຈຸດສິ້ນສຸດ, ມັກ ໃຊ້ກັບຄຳກຳມະທີ່ຊີ້ບອກຈຸດສິ້ນສຸດ ເຊັ່ນ '도착하다, 이르다, 다다르다'. ສ່ວນ '(으)로' ແມ່ນໃຊ້ໃນເວລາຊີ້ ບອກເຖິງທິດທາງ, ຈຸດທີ່ເປັນເປົ້າໝາຍ, ຈຸດແວະເຊົາ.

- 서울**에** 도착했다. (O) 서울로 도착했다. (X)
- 부산에 떠났다. (X) 부산**으로** 떠났다. (O)



ເຂົ້າໃຈການໃຊ້ '(으)로' ແລ້ວບໍ? ສະນັ້ນ ຈົ່ງເລືອກເອົາປະໂຫຍກຄຳຕອບທີ່ຖືກຕ້ອງ ເພື່ອຕື່ມໃສ່ບົດສົນທະນາຄົບຖ້ວນ.

**2. 대화를 읽고 맞는 답을 고르세요.** ຈົ່ງອ່ານບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

1) 가: 주말에 뭐 했어요? ໃນທ້າຍອາທິດໄດ້ເຮັດຫຍັງ?
   나: ______________________.

① 부산으로 여행을 할 거예요 ② 부산으로 여행을 갔다 왔어요

2) 가: 편지를 보내려고 합니다. ຈະສົ່ງຈົດໝາຍ.
   나: ______________________?

① 어디로 보내실 거예요 ② 어디에서 보내실 거예요

정답 1) ② 2) ①



### 유용한 표현 ສຳນວນທີ່ສຳຄັນ

**좀 천천히 말씀해 주세요. ກະລຸນາເວົ້າຊ້າໆ.**

가: 천오백 원이에요. ໜຶ່ງພັນຫ້າຮ້ອຍວອນ.
나: 죄송하지만 **좀 천천히 말씀해 주세요.** ຂໍໂທດ **ກະລຸນາເວົ້າຊ້າໆໄດ້ບໍ.**

## 대화 2 ບົດສົນທະນາ 2

Track 92



ຕວນ ແລະ ພະນັກງານໄປສະນີ ກຳລັງສົນທະນາກັນ. ກ່ອນອື່ນ ຈົ່ງຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

투 안 **베트남으로 소포를 보내려고 하는데요.**
ຈະສົ່ງອວຍພອນ ໄປປະເທດຫວຽດນາມ.

우체국 직원 **상자를 저울에 올려놓으십시오.**
ກະລຸນາເອົາປະໄວ້ຊິງຊັງນີ້.

투 안 **호찌민까지 얼마나 걸릴까요?**
ໃຊ້ເວລາດົນປານໃດໄປຮອດເມືອງໂຮຈິມິນ?

우체국 직원 **배편은 한두 달 정도 걸리고 항공편은 열흘에서 2주 정도 걸립니다.**
ຝາກໄປທາງເຮືອໄປເຖິງປະເທດຫວຽດນາມໃຊ້ເວລາປະມານ 1-2 ເດືອນ ແລະ ຖ້າຝາກທາງຍົນຈະໃຊ້ເວລາປະມານສິບມື້ ຫຼືວ່າສອງອາທິດ.

투 안 **좀 급해서 그러는데 제일 빠른 걸로 해 주세요.**
ມັນຂ້ອນຂ້າງດ່ວນ ກະລຸນາສົ່ງໄປໄວເທົ່າທີ່ຈະໄວໄດ້.

우체국 직원 **국제 특급이 제일 빠른데 국제 특급으로 보내시겠습니까?**
ການບໍລິການຝາກດ່ວນລະຫວ່າງປະເທດ ແມ່ນສົ່ງໄວທີ່ສຸດ ຈະສົ່ງແບບບໍ?

투 안 **네, 그걸로 해 주세요.**
ເຈົ້າ, ຝາກແບບນີ້ເລີຍ.

**한두** 1 ຫາ 2
ປະມານ ໜຶ່ງ ຫຼື ສອງ
- 일년에 한두 번 가족과 함께 여행을 합니다.
  ໃນປີໜຶ່ງຈະໄປທ່ຽວກັບຄອບຄົວໜຶ່ງຫາສອງຄັ້ງ.

**얼마나 걸릴까요?**
ໃຊ້ເວລາດົນປານໃດ?
ໃຊ້ໃນເວລາຖາມໄລຍະເວລາຈົນເຖິງສະຖານທີ່ທີ່ກຳນົດໄວ້.
- 라오스에서 한국까지 비행기로 얼마나 걸릴까요?
  ແຕ່ປະເທດລາວຫາປະເທດເກົາຫຼີມາທາງຍົນໃຊ້ເວລາດົນປານໃດ?

**정도** ປະມານ
- 일주일 정도 병원에 다녀야 합니다.
  ຈະຕ້ອງໄປໂຮງໝໍປະມານ 1 ອາທິດ.

ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 베트남 호찌민까지 항공편으로 얼마나 걸려요?
   ຝາກເຄື່ອງໄປທາງຍົນ ຮອດໂຮ່ຈິມິນ ປະເທດຫວຽດນາມ ໃຊ້ເວລາດົນປານໃດ?
2. 제일 빠른 우편은 뭐예요? ສິ່ງຈົດໝາຍທີ່ໄວທີ່ສຸດແມ່ນສົ່ງທາງໃດ?

정답 1. 열흘에서 2주 정도 걸려요. 2. 국제 특급이에요.



## 어휘 2 ຄຳສັບ 2 소포/택배 ພັດສະດຸ/ບໍລິການສົ່ງເຄື່ອງ



ຄຳສັບ ແລະ ສຳນວນທີ່ກ່ຽວຂ້ອງກັບຄຳສັບພັດສະດຸ/ບໍລິການສົ່ງເຄື່ອງມີຫຍັງແດ່?



저울에 올려놓다
ເອົາເຄື່ອງຂຶ້ນຊັ່ງ



무게를 재다
ຊັ່ງນ້ຳໜັກ



소포를 보내다
ສົ່ງພັດສະດຸ (ສົ່ງເຄື່ອງ)



소포를 받다
ຮັບພັດສະດຸ (ຮັບເຄື່ອງ)

- 소포를 **저울에 올려놓으세요.** ກະລຸນາເອົາພັດສະດຸຍອງໄວ້ຊັ່ງສັ່ງນີ້.
- **소포를 받으면** 기분이 좋아요. ຖ້າຫາກໄດ້ຮັບເຄື່ອງອາລົມຄືງຈະດີ.



일반 우편
ສົ່ງທົ່ວໄປ



등기 우편
ການລົງທະບຽນໄປສະນີ



국제 특급(EMS)
ບໍລິການສົ່ງໄປສະນີດ່ວນ (EMS)



택배
ສົ່ງເຄື່ອງ

- **국제 특급**으로 보내면 제일 빨라요. ຖ້າຫາກວ່າສົ່ງທາງບໍລິການສົ່ງດ່ວນລະຫວ່າງປະເທດແມ່ນໄວທີ່ສຸດ.
- 요즘은 **택배**를 이용하는 사람들이 많아졌어요. ຊ່ວງນີ້ ມີຜູ້ຄົນໃຊ້ບໍລິການຝາກເຄື່ອງທາງໄປສະນີຫຼາຍຂຶ້ນ.



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요.
ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.



1) ______ 2) ______ 3) ______ 4) ______

보기: 무게를 재다 / 소포를 보내다 / 저울에 올려놓다 / 소포를 받다

정답 1) 저울에 올려놓다 2) 무게를 재다 3) 소포를 보내다 4) 소포를 받다

## 문법 2 ໄວຍາກອນ 2 -(으)십시오




'-(으)십시오' ແມ່ນປັດໄຈທີ່ໃຊ້ຕື່ມທ້າຍຄຳກຳມະເພື່ອສ້າງເປັນຮູບປະໂຫຍກຄຳສັ່ງ ເພື່ອສະແດງຄວາມສຸພາບຢ່າງເປັນທາງການ. ມັນຖືກໃຊ້ໃນການຊັກຊວນ ຫຼື ສັ່ງໃຫ້ເຮັດຕາມຢ່າງສຸພາບໃນສະຖານທີ່ ທີ່ເປັນທາງການ ເຊັ່ນ ກອງປະຊຸມ, ການຂຶ້ນບັນລະຍາຍ, ການຂຶ້ນລາຍງານບົດອື່ນໆເປັນຕົ້ນ.

| 자음(ພະຍັນຊະນະ) → -으십시오 | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → -십시오 |
|---|---|
| 올려놓다 → 올려놓**으십시오** | 보내다 → 보내**십시오**<br>살다 → 사**십시오** |

- 가: 신용카드를 잃어버렸는데 어떻게 해야 돼요? ບັດເຄດິດເສຍ, ຈະຕ້ອງເຮັດແນວໃດ?
  나: 이 전화번호로 전화를 **거십시오**. ໃຫ້ (ເຈົ້າ) ໂທໄປເບີນີ້ເດີ.
- 가: 소포를 보내고 싶습니다. ຂ້ອຍຢາກສົ່ງວັດສະດຸ.
  나: 이 저울 위에 **올려놓으십시오**. ກະລຸນາ ເອົາ (ວັດສະດຸ) ຂຶ້ນວາງໃສ່ເທິງຊີງ.



**비교해 보세요** ຈົ່ງປຽບທຽບລອງເບິ່ງ

**✔ ລະຫວ່າງ '-(으)십시오' ກັບ '-(으)세요'**

'-(으)십시오' ກັບ '-(으)세요' ແມ່ນສະແດງເຖິງຄຳສັ່ງ. '-(으)십시오' ໃຊ້ໃນສະຖານະການທີ່ເປັນທາງການແບບບໍ່ມີຄວາມອ່ອນໂຍນ. ແຕ່ '-(으)세요' ມັນໃຊ້ກັບຄົນທີ່ເຮົາສະໜິດສະໜົມ ແລະ ໃຊ້ໃນສະຖານະການທີ່ບໍ່ເປັນທາງການກັບຄົນທີ່ອາວຸໂສກວ່າເຮົາ ຫຼື ຄົນທີ່ອາຍຸໃກ້ຄຽງກັນ.



ເຂົ້າໃຈກ່ຽວກັບ '-(으)십시오' ແລ້ວບໍ? ສະນັ້ນ, ລອງເຊື່ອມຕໍ່ລະຫວ່າງປະໂຫຍກທາງໜ້າ ແລະ ປະໂຫຍກທາງຫຼັງຕໍ່ໄປນີ້ເຂົ້າຫາກັນລອງເບິ່ງ.

2. 다음의 문장에 이어질 문장을 찾아 연결하세요.
ຈົ່ງຊອກເບິ່ງປະໂຫຍກທີ່ຖືກຕ້ອງທີ່ສຸດຕໍ່ໄປນີ້ ແລ້ວເຊື່ອມຕໍ່ປະໂຫຍກເຂົ້າໃສ່ກັນ.

① 무게를 재야 합니다. • • ㉠ 우표를 붙이십시오.
② 우표를 안 붙였습니다. • • ㉡ 여기에서 기다리십시오.
③ 지금 들어가면 안 됩니다. • • ㉢ 여기에 주소를 쓰십시오.
④ 보내는 사람의 주소가 없습니다. • • ㉣ 소포를 저울에 올려놓으십시오.

정답 ①㉣ ②㉠ ③㉡ ④㉢



ລອງມາຮຽນຮູ້ນຳກັນຕື່ມບໍ? ຈົ່ງຕື່ມປະໂຫຍກຕໍ່ໄປນີ້ໃຫ້ຄົບຖ້ວນ ໂດຍການໃຊ້ '-(으)십시오'.

1. 지금은 회의 중입니다. 여기서 잠시만 ______________.
2. 이곳 청소가 끝나면 1층 식당으로 ________________.

정답 1. 기다리십시오 2. 가십시오/내려가십시오

## 활동 ກິດຈະກຳ

표를 보고 〈보기〉처럼 이야기해 보세요. ເບິ່ງຕາຕະລາງແລ້ວສ້າງບົດສົນທະນາກັບໝູ່ເພື່ອນຄືກັບຕົວຢ່າງ.

| 지역<br>ສະຖານທີ່, ເຂດ | 국제 특급(EMS)<br>ສົ່ງຈົດໝາຍດ່ວນ (EMS) | 보통 우편<br>ຈົດໝາຍທົ່ວໄປ, ຈົດໝາຍທຳມະດາ |
|---|---|---|
| 중국, 베트남 ປະເທດຈີນ, ປະເທດຫວຽດນາມ | 2~3일 2 ຫາ 3 ມື້ | 5일 5 ມື້ |
| 태국, 필리핀 ປະເທດໄທ, ປະເທດຟີລິບປິນ | 3~4일 3 ຫາ 4 ມື້ | 7일 7 ມື້ |
| 인도네시아, 스리랑카<br>ປະເທດອິນໂດເນເຊຍ, ປະເທດສີລັງກາ | 5~6일 5 ຫາ 6 ມື້ | 10일 10 ມື້ |

보기 ຕົວຢ່າງ



중국

가: 중국으로 카드를 보내려고 해요.
ຈະສົ່ງບັດອວຍພອນໄປປະເທດຈີນ.
나: 카드를 저울 위에 올려놓으십시오.
ຈົ່ງເອົາບັດອວຍພອນວາງໄວ້ເທິງຊິງຊັ່ງ.
가: 중국까지 얼마나 걸려요?
ໄປຮອດປະເທດຈີນ ໃຊ້ເວລາດົນປານໃດ?
나: 국제 특급은 2, 3일 걸리고 보통 우편은 5일 정도 걸립니다.
ຝາກແບບດ່ວນໃຊ້ເວລາ 2 ຫາ 3 ມື້ ແລະ ຝາກທົ່ວໄປກໍໃຊ້ເວລາ 5 ມື້.
가: 그럼 특급 우편으로 해 주세요.
ສະນັ້ນ ຝາກແບບດ່ວນໃຫ້ແດ່.

1)


태국 ປະເທດໄທ

2)


베트남ປະເທດຫວຽດນາມ

3)



인도네시아 ປະເທດອິນໂດເນເຊຍ

4)


스리랑카 ປະເທດສີລັງກາ

정답

1) 가: 태국으로 편지를 보내려고 해요.
나: 편지를 저울 위에 올려놓으십시오.
가: 태국까지 얼마나 걸려요?
나: 국제 특급은 3, 4일 걸리고 보통 우편은 7일 걸립니다.
가: 그럼 특급 우편으로 해 주세요.

2) 가: 베트남으로 엽서를 보내려고 해요.
나: 엽서를 저울 위에 올려놓으십시오.
가: 베트남까지 얼마나 걸려요?
나: 국제 특급은 2, 3일 걸리고 보통 우편은 5일 걸립니다.
가: 그럼 특급 우편으로 해 주세요.

3) 가: 인도네시아로 카드를 보내려고 해요.
나: 카드를 저울 위에 올려놓으십시오.
가: 인도네시아까지 얼마나 걸려요?
나: 국제 특급은 5, 6일 걸리고 보통 우편은 10일 걸립니다.
가: 그럼 특급 우편으로 해 주세요.

4) 가: 스리랑카로 소포를 보내려고 해요.
나: 소포를 저울 위에 올려놓으십시오.
가: 스리랑카까지 얼마나 걸려요?
나: 국제 특급은 5, 6일 걸리고 보통 우편은 10일 걸립니다.
가: 그럼 특급 우편으로 해 주세요.



## 정보 ຂໍ້ມູນທົ່ວໄປ

# 국제 특급 우편 서비스

ບໍລິການຝາກດ່ວນ ລະຫວ່າງປະເທດ

✚ 국제 특급 우편 서비스는 급한 편지나 서류, 소포 등을 가장 빠르고 안전하게 외국으로 배달해 주는 서비스입니다. 국제 특급으로 발송한 우편물의 경우에는 국제적으로 연결된 컴퓨터망을 통해 배달 여부가 즉시 조회됩니다. 컴퓨터 조회가 되지 않을 경우에도 이용자가 원하면 팩스나 이메일을 통해 조회하고 그 결과를 알려드립니다. 현재 150개국으로 발송이 가능합니다.

ບໍລິການແບບຝາກດ່ວນລະຫວ່າງປະເທດແມ່ນ ການຝາກຈົດໝາຍດ່ວນ ຫຼືວ່າ ເອກະສານດ່ວນ, ພັດສະດຸ ແລະ ອື່ນໆ ແບບວ່ອງໄວ ແລະ ມີຄວາມປອດໄພສູງ. ໃນການບໍລິການລະຫວ່າງປະເທດ. ດ້ວຍການບໍລິການຝາກ ແບບດ່ວນລະຫວ່າງປະເທດ ຈະເປັນການສົ່ງພັດສະດຸໄປຕ່າງປະເທດ ໂດຍການເຊື່ອມຕໍ່ຈັດສົ່ງຜ່ານລະບົບຄອມພິວເຕີເອເລັກໂທນິກ, ຖ້າຫາກລະບົບຄອມພິວເຕີ ຫາກເກີດ ຄວາມຄັດຂ້ອງ ຫຼື ເຈົ້າຂອງເຄື່ອງຢາກຮູ້ກ່ຽວກັບໄລຍະເວລາການຮັບເຄື່ອງກໍສາມາດແຈ້ງໃຫ້ທ່ານໄດ້ໂດຍຜ່ານທາງອີເມວຂອງທ່ານ. ປັດຈຸບັນ ສາມາດສົ່ງເຄື່ອງໄປ150 ປະເທດທົ່ວໂລກ.

### ✚보낼 수 있는 물품 ວັດຖຸສິ່ງຂອງທີ່ສາມາດສົ່ງໄດ້




| 편지 | 서류 | 옷 | 책 | 화장품 |
|---|---|---|---|---|
| ຈົດໝາຍ | ເອກະສານ | ເສື້ອ | ປຶ້ມ | ເຄື່ອງສຳອາງ |

### ✚보낼 수 없는 물품 ວັດຖຸສິ່ງຂອງທີ່ບໍ່ສາມາດສົ່ງໄດ້




| 음식물 | 한약 | 동물류 | 식물류 | 폭발성/가연성 물질 |
|---|---|---|---|---|
| ອາຫານ | ຢາປົວພະຍາດ | ສັດ | ປະເພດພືດ | ລະເບີດ, ອາວຸດສົງຄາມ / ປະເພດເຄື່ອງໃຊ້ໄຟຟ້າ |

| 금·은 등의 귀금속 | 신용카드 | 현금(지폐, 동전) | 여행자 수표 | 항공권 |
|---|---|---|---|---|
| ຄຳ, ເງິນ, ອັນຍະມະນີ ແລະ ອື່ນໆ | ບັດທະນາຄານ | ເງິນສົດ (ເງິນເຈ້ຍ, ເງິນຫຼຽນ) | ໃບເຊັກ ຂອງນັກທ່ອງທ່ຽວ | ປີ້ຍົນ |



# EPS-TOPIK 듣기 ພາກຟັງ EPS-TOPIK



ແຕ່ຂໍ້ທີ່ 1 ຫາ ຂໍ້ທີ 2 ແມ່ນເບິ່ງຮູບ ແລະ ອ່ານຄຳຖາມແລ້ວເລືອກເອົາຄຳຕອບ ທີ່ຖືກຕ້ອງທີ່ສຸດ. ກ່ອນຟັງບົດສົນທະນາ ຈົ່ງກວດຄືນເບິ່ງຮູບກ່ອນ.

[1~2] 다음 그림을 보고 알맞은 대답을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

Track 93

1. 이것은 무엇입니까? ອັນນີ້ແມ່ນຫຍັງ?

① ② ③ ④

2. 지금 무엇을 합니까? ດຽວນີ້ເຮັດຫຍັງ?

① ② ③ ④



ຂໍ້ 3 ຫາ 5 ແມ່ນເປັນການຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ ແລະ ຖືກຕ້ອງທີ່ສຸດ. ກ່ອນຟັງຄຳຖາມ ຈົ່ງກວດເບິ່ງເນື້ອໃນ ແລະ ຮູບພາບກ່ອນ.

[3~5] 이야기를 듣고 질문에 알맞은 대답을 고르십시오.
ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ເໝາະສົມກັບແຕ່ລະຄຳຖາມ.

3. 여기는 어디입니까? ບ່ອນນີ້ ຢູ່ໃສ?

① 약국 ② 은행
③ 백화점 ④ 우체국

4. 남자는 왜 여기에 왔습니까? ເປັນຫຍັງຜູ້ຊາຍຄົນນັ້ນ ຈຶ່ງມາທີ່ນີ້?

① 편지를 보내려고 왔습니다.
② 택배를 받아야 해서 왔습니다.
③ 여자를 만나고 싶어서 왔습니다.
④ 택배 물품을 전달하려고 왔습니다.

5. 베트남으로 엽서를 보낼 때 국제 특급은 며칠이 걸립니까?
ຝາກບັດອວຍພອນ ໂດຍການບໍລິການຝາກແບບດ່ວນ ລະຫວ່າງປະເທດ ໄປເຖິງປະເທດຫວຽດນາມໃຊ້ເວລາຈັກມື້?

① 3일 ② 4일
③ 7일 ④ 10일



## 듣기 대본 ເນື້ອໃນບົດຟັງ

1. ① 여: 소포입니다. ພັດສະດຸ.　② 여: 엽서입니다. ບັດອວຍພອນ.
   ③ 여: 편지입니다. ຈົດໝາຍ.　④ 여: 카드입니다. ບັດ.
2. ① 남: 편지를 씁니다. ຂຽນຈົດໝາຍ.　② 남: 무게를 잽니다. ຊັ່ງນ້ຳໜັກ.
   ③ 남: 돈을 찾습니다. ຊອກຫາເງິນ.　④ 남: 우표를 붙입니다. ຕິດສະແຕັມ.
3. 여: 중국으로 소포를 보내려고 합니다. ຈະສົ່ງພັດສະດຸນີ້ໄປປະເທດຈີນ.
   남: 안에 무엇이 있습니까? ຂ້າງໃນມີແມ່ນຫຍັງ?
   여: 옷하고 책이 있어요. ມີເສື້ອ ແລະ ປຶ້ມ.
4. 남: (딩동 딩동) 모니카 씨, 계세요? (ສຽງກົດກະດິງ) ໂມນິກາຢູ່ບໍ?
   여: 네, 그런데 누구세요? ເຈົ້າຢູ່, ຂໍໂທດແມ່ນໃຜເນາະ?
   남: 택배 왔습니다. ມາສົ່ງເຄື່ອງຝາກ.
5. 여: 베트남으로 엽서를 보내려고 하는데 얼마나 걸릴까요?
   ຈະຝາກບັດອວຍພອນ ໄປເທດຫວຽດນາມຈະຕ້ອງໃຊ້ເວລາດົນປານໃດ?
   남: 국제 특급은 4일 정도 걸리고 일반 우편은 7일에서 10일 정도 걸려요.
   ຝາກການບໍລິການຝາກແບບດ່ວນ ລະຫວ່າງປະເທດ ແມ່ນໃຊ້ເວລາປະມານ 4 ມື້ ແລະ ຝາກທົ່ວໄປແມ່ນໃຊ້ເວລາປະມານ 7 ຫາ 10 ມື້.
   여: 그럼 국제 특급으로 할게요. ສະນັ້ນຝາກການບໍລິການຝາກແບບດ່ວນ ລະຫວ່າງປະເທດ.

정답 1. ③ 2. ② 3. ④ 4. ④ 5. ②

## 확장 연습 ບົດເຝິກຫັດເພີ່ມເຕີມ

L-29

1. 대화를 듣고 질문에 알맞은 것을 고르십시오.
   ຈົ່ງຟັງບົດສົນທະນາ ແລ້ວເລືອກເອົາຄຳຕອບ ທີ່ເໝາະສົມກັບຄຳຖາມ.

   남자가 여자를 찾아 온 이유는 무엇입니까? ຍ້ອນຫຍັງ ຜູ້ຊາຍຄົນນັ້ນ ຈຶ່ງຊອກຫາລາວແມ່ຍິງຄົນນີ້?

   ① 소포를 부치려고 ② 소포를 포장하려고
   ③ 시간을 물어 보려고　④ 우편번호를 문의하려고

## 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 태국으로 소포를 보내려고 하는데 시간이 얼마나 걸릴까요?
   ຢາກຈະສົ່ງຈົດໝາຍ ໄປປະເທດໄທ ຈະໃຊ້ເວລາດົນປານໃດ?
   여: 특급은 4일 정도 걸리고 일반은 7일 이상 걸려요.
   ຖ້າຝາກດ່ວນກໍປະມານ 4 ມື້, ຖ້າຝາກທຳມະດາກໍປະມານ 7 ມື້.
   남: 그럼 특급으로 보내 주세요. ສະນັ້ນ ຝາກດ່ວນໃຫ້ແດ່.
   여: 알겠습니다. 여기에 보내시는 분과 받으시는 분의 이름과 주소를 써 주세요.
   ເຈົ້າ, ຂຽນຊື່ທີ່ຢູ່ຜູ້ຝາກ ແລະ ຊື່ຜູ້ຮັບໃສ່ທີ່ນີ້.





# EPS-TOPIK 읽기 ພາກອ່ານ EPS-TOPIK



ຂໍ້ 1 ຫາ 2 ແມ່ນເປັນການເບິ່ງຮູບພາບ ແລະ ຊອກເອົາຄວາມໝາຍທີ່ຖືກຕ້ອງວ່າແມ່ນຫຍັງ? ຈົ່ງທົບທວນຄືນຄຳສັບທີ່ຮຽນມາຂ້າງເທິງ ແລ້ວລອງຕອບຄຳຖາມລຸ່ມນີ້ລອງເບິ່ງ.

[1~2] 다음 그림을 보고 맞는 문장을 고르십시오.
ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1.

① 카드입니다. ② 엽서입니다.
③ 이메일입니다. ④ 편지 봉투입니다.

2.




① 우표를 삽니다. ② 엽서를 씁니다.
③ 돈을 찾습니다. ④ 통장 정리를 합니다.



ຂໍ້ທີ 3 ຫາ 5 ແມ່ນເປັນການຊອກຫາເນື້ອໃນທີ່ຖືກຕ້ອງທີ່ສຸດ ແລ້ວຕື່ມໃສ່ບ່ອນຫວ່າງຂອງບົດສົນທະນາ. ຈົ່ງຕັ້ງໃຈຟັງບົດສົນທະນາໃຫ້ດີ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງທີ່ສຸດ.

[3~5] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

3.

가: 편지를 ________________ 해요. 이 근처에 우체국이 있어요?
ຈະສົ່ງຈົດໝາຍ ຢູ່ແຖວໃກ້ນີ້ມີຫ້ອງການໄປສະນີບໍ?

나: 이 근처에는 없고 지하철역 쪽으로 가야 해요.
ຢູ່ແຖວໃກ້ນີ້ບໍ່ມີ ແລະ ຈະຕ້ອງໄປເຂດສະຖານີລົດໄຟໃຕ້ດິນ.

① 받으려고 ② 보내려고 ③ 읽으려고 ④ 찾으려고

4.

가: 소포를 보내고 싶어요. ຕ້ອງການພັດສະດຸ.

나: 그럼 ________________ 위에 소포를 올려놓으세요.
ສະນັ້ນ ກະລຸນາເອົາພັດສະດຸວາງໄວ້ເທິງເຄື່ອງຊັ່ງນ້ຳໜັກນີ້.

① 전화 ② 저울 ③ 우표 ④ 봉투

5.

가: 손님, 받는 사람의 주소가 없네요. 받는 사람의 주소를 ________________.
ທ່ານ (ລູກຄ້າ), ບໍ່ມີທີ່ຢູ່ຂອງຜູ້ຮັບ, ກະລຸນາຂຽນທີ່ຢູ່ຂອງຜູ້ຮັບໃສ່ແດ່.

나: 네, 알겠습니다. 여기 있어요. ເຈົ້າ, ເຂົ້າໃຈແລ້ວ. ສຳເລັດແລ້ວ.

① 쓰네요 ② 쓰십시오 ③ 썼습니다 ④ 쓰지 마세요

정답 1. ③ 2. ④ 3. ② 4. ② 5. ②



## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1.

편지를 보낼 때에는 봉투에 받는 사람의 주소를 쓰고 ________을/를 붙여야 합니다.

ປົກກະຕິເວລາສົ່ງຈົດໝາຍ ຈະຂຽນທີ່ຢູ່ຂອງຜູ້ຮັບໃສ່ທີ່ນີ້ ແລ້ວຕິດໃສ່ແກັດຝາກເຄື່ອງ.

① 무게　② 요금　③ 우표　④ 저울

2.

친구에게 선물을 보내려고 우체국에 갔습니다. 일반 항공편으로 보내면 ________데 10일 정도 걸리고 국제 특급은 3일 정도 걸린다고 합니다.

ຈະຝາກຂອງຂວັນໃຫ້ເພື່ອນ ແລ້ວຕ້ອງໄດ້ໄປທີ່ໄປສະນີ. ຖ້າຫາກວ່າ ສົ່ງແບບທຳມະດາທຳໃຊ້ເວລາປະມານ 10 ມື້ຈຶ່ງຈະຮອດ, ຖ້າຫາກໃຊ້ບໍລິການຝາກແບບດ່ວນ ກໍຈະໃຊ້ເວລາປະມານ 3 ມື້.

① 도착하는　② 설치하는　③ 올라오는　④ 출발하는

3. 다음 글을 읽고 무엇에 대한 글인지 고르십시오.
ຈົ່ງອ່ານບົດຄວາມດັ່ງຕໍ່ໄປນີ້ ແລ້ວເລືອກເອົາຄຳຕອບວ່າ ເປັນບົດຄວາມກ່ຽວກັບຫຍັງ.

점심시간에 우체국에 갔습니다. 고향에 계시는 부모님에게 선물을 보냈습니다. 배송비는 삼만 원이었습니다.

ເວລາກິນເຂົ້າສວຍໄດ້ໄປທີ່ໄປສະນີ. ໄດ້ໄປຝາກຂອງຂວັນໃຫ້ພໍ່ແມ່ ຢູ່ບ້ານເກີດ, ຄ່າຝາກເຄື່ອງແມ່ນ 30 ພັນວອນ.

① 소포　② 예약　③ 생일　④ 쇼핑

4. 다음 영수증에 대한 설명으로 맞는 것은 무엇입니까?
ຄຳຕອບທີ່ຖືກຕ້ອງກັບ ຄຳອະທິບາຍກ່ຽວກັບໃບບິນຕໍ່ໄປນີ້ ແມ່ນຫຍັງ?

우체국 ໄປສະນີ

접수 일자: 11월 9일 12:40
ມື້ທີຝາກເຄື່ອງ: ເດືອນ 9 ວັນທີ 11 ເວລາ: 12:40 ນາທີ
총 요금: 2,800원 ລາຄາທັງໝົດ: 2,800 ວອນ

국내 일반 우편물 ຝາກເຄື່ອງທົ່ວໄປ ພາຍໃນປະເທດ

| 보낸 사람 | 리리 | ຜູ້ທີ່ຝາກເຄື່ອງ | ລີລີ |
|---|---|---|---|
| 받는 사람 | 수루 | ຜູ້ທີ່ຮັບເຄື່ອງ | ຊູຣູ |
| 수납 요금 | 2,800원 | ລາຄາຝາກ | 2,800 ວອນ |

① 요금은 모두 이천 원입니다.
② 우편물을 외국으로 보냅니다.
③ 리리 씨가 수루 씨에게 보냅니다.
④ 우편물은 십일월 구일에 도착합니다.

정답 1. ③ 2. ① 3. ① 4. ③




# 거기에서 태권도를 배울 수 있어요?

ຢູ່ບ່ອນນີ້ ສາມາດຮຽນເທຄວັນໂດໄດ້ບໍ?

**학습 안내** ຄຳແນະນຳ ໃນການຮຽນ

| | |
|---|---|
| □ ຈຸດປະສົງໃນການຮຽນ | ການສອບຖາມການໃຊ້ບໍລິການ, ການລົງທະບຽນການເຝິກອົບຮົມ |
| □ ໄວຍາກອນ | -(으)ㄹ 수 있다/없다, -(으)려면 |
| □ ຄຳສັບ ແລະ ສຳນວນຄຳເວົ້າ | ການສຶກສາ ແລະ ການບໍລິການ, ການນຳໃຊ້ ສູນສົ່ງເສີມສິດແຮງງານຕ່າງດ້າວ |
| □ ຂໍ້ມູນກ່ຽວກັບວັດທະນາທຳ | ສະຖາບັນການຊ່ວຍເຫຼືອແຮງງານຕ່າງປະເທດ |



## 대화 1 ບົດສົນທະນາ 1

Track 94



ຣີຮັນ ໄດ້ໂທລະສັບຫາ ສະຖາບັນເພື່ອການຊ່ວຍເຫຼືອແຮງງານຕ່າງປະເທດ. ກ່ອນອື່ນ ຈົ່ງຟັງບົດສົນທະນາ 2 ຄັ້ງ ແລ້ວເວົ້າຕາມ.

리한 여보세요. 거기 외국인력지원센터지요?
ສະບາຍດີ. ນີ້ແມ່ນສະຖາບັນເພື່ອການຊ່ວຍເຫຼືອແຮງງານຕ່າງປະເທດບໍ?

직원 네, 무엇을 도와 드릴까요?
ເຈົ້າ, ມີຫຍັງໃຫ້ຊ່ວຍບໍ່?

리한 태권도를 배우고 싶은데 거기에서 태권도 수업을 들을 수 있어요?
ຂ້ອຍຕ້ອງການຮຽນເທຄວັນໂດ, ຂ້ອຍສາມາດຮຽນເທຄວັນໂດ ຢູ່ບ່ອນນີ້ໄດ້ບໍ?

직원 네, 일요일에 태권도 수업이 있어요.
ເຈົ້າ, ມີຫ້ອງຮຽນເທຄວັນໂດ ໃນວັນເສົາ.

리한 태권도를 전혀 할 수 없는데 괜찮을까요?
ຂ້ອຍຫຼິ້ນເທຄວັນໂດ ບໍ່ເປັນຈັກໜ້ອຍເລີຍ, ກໍໄດ້ບໍ?

직원 그럼요. 일요일에 센터에 오셔서 상담을 받아 보세요.
ໄດ້ຄືກັນ. ວັນອາທິດນີ້ ລອງເຂົ້າມາທີ່ສູນຂອງພວກເຮົາ ແລ້ວລອງຮັບຄຳປຶກສາເບິ່ງເດີ.

리한 네, 알겠습니다. 감사합니다. ເຈົ້າ, ເຂົ້າໃຈແລ້ວ. ຂອບໃຈ.

> **거기** ທີ່ນັ້ນ/ບ່ອນນັ້ນ
> ໃຊ້ເພື່ອບົ່ງບອກເຖິງສະຖານທີ່ໃນບົດສົນທະນາປະຈຳວັນ ຫຼື ທາງໂທລະສັບ.
> · 가: 거기 피자집이지요?
> ນີ້ແມ່ນຮ້ານພິຊາແມ່ນບໍ?
> 나: 네, 뭐 주문하시겠습니까?
> ເຈົ້າ, ຕ້ອງການຈະສັ່ງຫຍັງບໍ?

> **전혀** ບໍ່ຈັກໜ້ອຍເລີຍ
> ໂດຍທົ່ວໄປ ແມ່ນໃຊ້ໃນປະໂຫຍກປະຕິເສດ ທີ່ສະແດງເຖິງຄວາມໝາຍແບບປະຕິເສດທີ່ສຸດ.
> · 가: 다음 주부터 야근을 해야 돼요. 알고 있었어요?
> ນັບແຕ່ອາທິດໜ້າເປັນຕົ້ນໄປ ຕ້ອງເຮັດວຽກພາກຄ່ຳນຳ. ເຈົ້າຮູ້ແລ້ວບໍ?
> 나: 아니요, 저는 전혀 몰랐어요.
> ບໍ່. ບໍ່ໄດ້ຮູ້ຈັກໜ້ອຍເລີຍ.



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈົ່ງຕອບຄຳຖາມຕໍ່ໄປນີ້.

1. 리한 씨는 왜 센터에 전화했어요? ເປັນຫຍັງ ຣີຮັນ ຈຶ່ງໂທລະສັບໄປທີ່ສະຖາບັນ?
2. 리한 씨는 태권도를 할 수 있어요? ຣີຮັນ ສາມາດຫຼິ້ນເທຄວັນໂດໄດ້ບໍ?

정답 1. 태권도를 배우고 싶어서 전화했어요. 2. 아니요, 전혀 할 수 없어요.





## 어휘 1 ຄຳສັບ 1 　교육 및 서비스 ການສຶກສາ ແລະ ການບໍລິການ



ພວກເຮົາລອງມາເບິ່ງນຳກັນວ່າ ຄຳສັບທີ່ກ່ຽວກັບການເຝິກອົບຮົມ ແລະ ການບໍລິການມີຫຍັງແດ່.




한국어 교육
ການເຝິກອົບພາສາເກົາຫຼີ



컴퓨터 교육
ການເຝິກອົບຮົມຄອມພິວເຕີ




태권도 교육
ການເຝິກເທຄວັນໂດ




법률 교육
ການເຝິກອົບຮົມກົດໝາຍ

교육
ການເຝິກອົບຮົມ




안전 교육
ການເຝິກອົບຮົມ
ຄວາມປອດໄພ



국악 교육
ການເຝິກອົບຮົມ
ເຄື່ອງດົນຕີພື້ນເມືອງ



금융 교육
ການເຝິກອົບຮົມ
ທາງການເງິນ



영양 교육
ການເຝິກອົບຮົມ
ໂພຊະນາການ



양방 진료
ການຮັກສາ ແບບວິທະຍາສາດ



진료
ການປິ່ນປົວຮັກສາ



한방 진료
ການຮັກສາແບບພື້ນເມືອງ



ຈົ່ງຕອບຄຳຖາມ ໂດຍທີ່ບໍ່ເບິ່ງພາກສ່ວນຄຳສັບຂ້າງເທິງນັ້ນ.

**1. 그림을 보고 알맞은 말을 연결하세요.** ຈົ່ງເບິ່ງຮູບພາບ ແລ້ວຂີດເຊື່ອມຕໍ່ໃສ່ຄຳເວົ້າທີ່ເໝາະສົມ.

① 

② 


③ 


④ 


㉠ 안전 교육　㉡ 컴퓨터 교육　㉢ 태권도 교육　㉣ 한국어 교육

정답 ① ㉡ ② ㉣ ③ ㉠ ④ ㉢

## 문법 1 ໄວຍາກອນ 1 -(으)ㄹ 수 있다/없다




'-(으)ㄹ 수 있다/없다' ມັນຊີ້ບອກເຖິງຄວາມສາມາດ, ຄວາມເປັນໄປໄດ້ທີ່ຈະມີ ຫຼື ບໍ່ມີ. ມັນສາມາດໄປໄດ້ແຕ່ກັບຄຳກຳມະເທົ່ານັ້ນ ແຕ່ຖ້າການກະທຳນັ້ນ ເຮົາຫາກສາມາດເຮັດໄດ້ ຫຼື ມີຄວາມເປັນໄປໄດ້ ເຮົາໃຊ້ '-(으)ㄹ 수 있다', ຖ້າບໍ່ເປັນຄືສິ່ງທີ່ກ່າວມານັ້ນ ເຮົາໃຊ້ '-(으)ㄹ 수 없다'.

| 자음(ພະຍັນຊະນະ) → **-을 수 있다/없다** | 모음(ສະຫຼະ), 자음(ພະຍັນຊະນະ) 'ㄹ' → **-ㄹ 수 있다/없다** |
|---|---|
| 읽다 → 읽**을 수 있다** | 보내다 → 보**낼 수 있다**<br>만들다 → 만**들 수 있다** |

- 가: 한국어를 배우고 싶어요. ຂ້ອຍຢາກຮຽນພາສາເກົາຫຼີ.
  나: 한국문화원에서 한국어를 **배울 수 있어요**. (ເຈົ້າ) ສາມາດຮຽນພາສາເກົາຫຼີໄດ້ທີ່ສູນວັດທະນະທຳເກົາຫຼີ.
- 가: 흐엉 씨는 한국 음식을 **만들 수 있어요**? ເຮືອງ ເຮັດອາຫານເກົາຫຼີເປັນບໍ?
  나: 네, 불고기를 **만들 수 있어요**. ເຈົ້າ, (ຂ້ອຍ) ເຮັດບູລໂກກິເປັນ.



ເຂົ້າໃຈການໃຊ້ '-(으)ㄹ 수 있다/없다' ແລ້ວບໍ? ສະນັ້ນ ຈົ່ງຕື່ມປະໂຫຍກຕໍ່ໄປນີ້ໃຫ້ຄົບຖ້ວນດ້ວຍສຳນວນທີ່ເໝາະສົມຈາກກອບ.

**2. 빈칸에 맞는 표현을 〈보기〉에서 골라 '-(으)ㄹ 수 있다/없다'를 사용해서 대화를 완성하세요.**

ຈົ່ງເລືອກເອົາສຳນວນທີ່ຖືກຕ້ອງຈາກ < ກອບ > ແລ້ວໃຊ້ 으)ㄹ 수 있다/없다 ຕື່ມໃສ່ຊ່ອງຫວ່າງເພື່ອເຮັດໃຫ້ບົດສົນທະນາຄົບ ຖ້ວນ.

1) 가: 우리 김치찌개 먹으러 갈까요? ພວກເຮົາໄປກິນ ຄິມຈິຈີເກັນບໍ່?
   나: 김치찌개는 너무 매워서 __________. 불고기는 어때요?

2) 가: 컴퓨터를 배우고 싶어요. ຂ້ອຍຢາກຮຽນຄອມພິວເຕີ.
   나: 주말에 저하고 같이 외국인력센터에 갈래요? 거기에서 __________.

3) 가: 리리 씨는 중국 음식을 __________?
   나: 네, 저는 요리하는 것을 좋아해요. ເຈົ້າ, ຂ້ອຍມັກການແຕ່ງອາຫານ.

| 보기 | 먹다 | 만들다 | 배우다 |
|---|---|---|---|

정답 1) 먹을 수 없어요 2) 배울 수 있어요 3) 만들 수 있어요



ລອງມາຮຽນຮູ້ນຳກັນຕື່ມບໍ? ຈົ່ງຕື່ມປະໂຫຍກຕໍ່ໄປນີ້ໃຫ້ຄົບຖ້ວນ ໂດຍການໃຊ້ '-(으)ㄹ 수 있다/없다'.

받다　　출근하다

1. 몸이 아파서 오늘은 __________________.　2. 지금은 바빠서 전화를 __________________.

정답 1. 출근할 수 없어요 2. 받을 수 없어요



## 대화 2 ບົດສົນທະນາ 2

Track 95



ຣິຮັນ ໄດ້ໄປທີ່ສູນຊ່ວຍເຫຼືອຊາວຕ່າງປະເທດ. ເປັນຫຍັງລາວຈຶ່ງໄປບ່ອນນັ້ນ? ກ່ອນອື່ນ ຟັງບົດສົນທະນາສອງຄັ້ງ ແລ້ວເວົ້າຕາມ.

리 한 저기요. 태권도 수업을 듣고 싶은데 태권도 수업을 신청하려면 어떻게 해야 돼요?
ຂໍໂທດເດີ້. ຂ້າພະເຈົ້າ ຕ້ອງການຮຽນວິຊາເທຄວນໂດ, ຖ້າຢາກລົງທະບຽນຮຽນເທຄວນໂດ ຕ້ອງເຮັດແນວໃດ?

직 원 저희 센터는 처음이세요?
ທ່ານ ມາທີ່ສູນຂອງພວກເຮົາຄັ້ງທຳອິດບໍ?

리 한 네, 처음이에요.
ເຈົ້າ, ມາເທື່ອທຳອິດ.

직 원 그러면 먼저 이용자 카드를 만들어 드릴게요. 그 후에 상담을 받고 태권도 교육을 신청하시면 돼요. 외국인 등록증을 가지고 오셨어요?
ສະນັ້ນ ທຳອິດ ຂ້າພະເຈົ້າຈະເຮັດບັດຜູ້ຊົມໃຊ້ໃຫ້ກ່ອນ. ຕໍ່ໄປແມ່ນໄປຮັບຄຳປຶກສາກ່ອນ. ແລ້ວຈຶ່ງສະໝັກຮຽນວິຊາເທຄວນກໍໄດ້ແລ້ວ. ໄດ້ເອົາບັດທະບຽນຕ່າງດ້າວມານຳບໍ?

리 한 네, 여기 있어요.
ເຈົ້າ, ຢູ່ນີ້.

**어떻게 해야 돼요?**
ຕ້ອງເຮັດແນວໃດ?

ໃຊ້ເວລາຖາມກ່ຽວກັບວິທີການ.

- 통장을 만들고 싶은데 어떻게 해야 해요?
  ຂ້ອຍຕ້ອງການເຮັດປຶ້ມບັນຊີທະນາຄານ, ຕ້ອງເຮັດແນວໃດ?
- 한국 친구를 사귀고 싶은데 어떻게 해야 해요?
  ຂ້ອຍຕ້ອງການຄົບໝູ່ຄົນເກົາຫຼີ, ຈະຕ້ອງເຮັດແນວໃດ?

**먼저** ເບື້ອງຕົ້ນ/ເລີ່ມຕົ້ນ/ທຳອິດ/ກ່ອນ

- 먼저 들어가십시오.
  ກະລຸນາເຂົ້າໄປກ່ອນເລີຍ.
- 한국에 가면 제일 먼저 뭐 하고 싶어요?
  ຖ້າໄປປະເທດເກົາຫຼີ, ສິ່ງທຳອິດທີ່ຢາກເຮັດແມ່ນຫຍັງ?



ໄດ້ຕັ້ງໃຈຟັງ ແລະ ເວົ້າຕາມແລ້ວບໍ? ສະນັ້ນ ຈຶ່ງຕອບຄຳຖາມຕໍ່ໄປນີ້.

1. 리한 씨는 센터에서 무슨 수업을 들을 거예요?
   ຣິຮັນ ຈະຮຽນຫຍັງຢູ່ທີ່ສູນ?
2. 센터에서 수업을 들으려면 먼저 무엇을 만들어야 해요?
   ຖ້າຢາກຮຽນຢູ່ສູນ, ສິ່ງທຳອິດທີ່ຕ້ອງເຮັດແມ່ນຫຍັງ?

정답 1. 태권도 수업을 들을 거예요. 2. 이용자 카드를 만들어야 해요.



# 어휘 2 ຄຳສັບ 2

## 외국인력지원센터 이용
ການນຳໃຊ້ສະຖາບັນເພື່ອການຊ່ວຍເຫຼືອແຮງງານຕ່າງປະເທດ

ລອງມາເບິ່ງວ່າຄຳສັບທີ່ຈຳເປັນກ່ຽວກັບການນຳໃຊ້ ສະຖາບັນເພື່ອການຊ່ວຍເຫຼືອແຮງງານຕ່າງປະເທດ ມີຫຍັງແດ່.




예약하다
ຈອງ



상담을 받다
ຮັບຄຳປຶກສາ




교육을 신청하다
ການລົງທະບຽນການສຶກສາ




교육을 받다
ຮັບການສຶກສາ (ເຂົ້າຮຽນ)



이용하다
ໃຊ້, ຊົມໃຊ້




행사에 참여하다
ເຂົ້າຮ່ວມງານ




문화 체험을 하다
ປະສົບການທາງວັດທະນະທຳ



자원 봉사를 하다
ອາສາສະໝັກ

- 수업을 듣고 싶으면 센터에서 **상담을 받아** 보세요. ຖ້າຕ້ອງການຮຽນ, ລອງຮັບຄຳປຶກສາໄດ້ທີ່ສູນ.
- 센터에서 한국 **문화 체험을 할 수 있어요**. ຢູ່ທີ່ສູນ ກໍສາມາດຮັບປະສົບການທາງວັດທະນະທຳຂອງເກົາຫຼີໄດ້.
- 전화를 해서 **예약한** 후에 방문하세요.
  ຫຼັງຈາກໂທລະສັບ ແລະ ຈອງແລ້ວໆ ກະລຸນາເຂົ້າມາທີ່ຫ້ອງການຂອງພວກເຮົາ.



ຈົ່ງຄິດທົບທວນເຖິງຄຳສັບ ທີ່ຮຽນມາຂ້າງເທິງອີກຄັ້ງໜຶ່ງ ແລ້ວຕອບຄຳຖາມລອງເບິ່ງບໍ?

1. 그림에 맞는 표현을 〈보기〉에서 골라 넣으세요.
   ຈົ່ງເລືອກເອົາຄຳສັບຈາກ < ກອບ > ຕື່ມໃສ່ບ່ອນຫວ່າງ ທີ່ຖືກຕ້ອງກັບຮູບພາບ.




1) 



2) 




3) 



4) 

보기

행사에 참여하다 교육을 신청하다 자원 봉사를 하다 상담을 받다

정답 1) 행사에 참여하다 2) 상담을 받다 3) 교육을 신청하다 4) 자원 봉사를 하다

## 문법 2 ໄວຍາກອນ 2 -(으)려면



'-(으)려면' ມັນຖືກໃຊ້ຕື່ມທ້າຍຄຳກຳມະ ເຊິ່ງມີໜ້າທີ່ເຊື່ອມຕໍ່ສອງປະໂຫຍກເຂົ້າກັນ. ຖ້າປະທານໃນປະໂຫຍກມີເຈດຕະນາ ທີ່ຈະເຮັດບາງສິ່ງຢ່າງ ຫຼື ກະທຳສິ່ງໃດໜຶ່ງ ປະໂຫຍກຫຼັງຕ້ອງມີການກະທຳ.

| 자음(ພະຍັນຊະນະ) → **-으려면** | 모음(ສະຫຼະ), 자음 (ພະຍັນຊະນະ) 'ㄹ' → **-려면** |
|---|---|
| 받다 → 받**으려면** | 마시다 → 마시**려면**<br>만들다 → 만들**려면** |

- 가: 컴퓨터 교육은 어디에서 신청해요? ບ່ອນສະໝັກຮຽນຄອມພິວເຕີຢູ່ໃສ?
  나: 컴퓨터 교육을 **신청하려면** 1층으로 내려가세요.
  ຖ້າຈະສະໝັກຮຽນຄອມພິວເຕີ ໃຫ້ລົງໄປຊັ້ນ 1 ເດີ.
- 가: 김치찌개를 만들고 싶어요. ຂ້ອຍຢາກເຮັດຄີມຈີຈີເກ.
  나: 김치찌개를 **만들려면** 김치하고 고기가 필요해요.
  ຖ້າຢາກເຮັດຄີມຈີຈີເກຕ້ອງມີຊີ້ນກັບຄີມຈີ.
- 소포를 **보내려면** 우체국에 가야 해요. ຖ້າຢາກສົ່ງວັດສະດຸຕ້ອງໄປໄປສະນີເດີ.



ເຂົ້າໃຈການນຳໃຊ້ '-(으)려면' ແລ້ວບໍ? ດັ່ງນັ້ນ ຈົ່ງເລືອກເອົາສຳນວນທີ່ຖືກຕ້ອງເພື່ອເຮັດໃຫ້ບົດສົນທະນາຄົບຖ້ວນ.

2. 대화를 읽고 맞는 대답을 고르세요. ຈົ່ງອ່ານບົດສົນທະນາ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ.

1) 가: 태권도 교육을 받고 싶어요. ຂ້ອຍຢາກຮຽນ ເທຄວນໂດ
나: ______________ 여기 신청서를 쓰세요.
ຖ້າເຈົ້າຢາກຮຽນ ເທຄວນໂດ, ກະລຸນາ ຂຽນໃບສະໝັກນີ້.

① 태권도 교육을 받으면 ② 태권도 교육을 받으려면

2) 가: 비빔밥에 뭐가 들어가요? ຢູ່ໃນ ບີບິມບັບ ມີຫຍັງແດ່?
나: ______________ 여러 가지 채소하고 밥이 필요해요.
ຖ້າເຈົ້າຢາກເຮັດ ບີບິມບັບ, ເຈົ້າຕ້ອງມີເຂົ້າ ແລະ ຜັກຫຼາຍຊະນິດ.

① 비빔밥을 만들어서 ② 비빔밥을 만들려면

정답 1) ② 2) ②



### 유용한 표현 ສຳນວນທີ່ສຳຄັນ

그게 좋겠어요. ມັນຈະດີຫຼາຍ (ຖ້າເປັນແບບນັ້ນ ຈະດີຫຼາຍ).

가: 점심부터 먹고 일할까요? ກິນເຂົ້າສວຍກ່ອນ ແລ້ວຈຶ່ງເຮັດວຽກເນາະ?
나: **그게 좋겠어요.** ເປັນແບບນັ້ນ ຈະດີຫຼາຍ.

## 활동 ກິດຈະກຳ

**외국인력지원센터에 가서 〈보기〉처럼 이야기해 보세요.**
ລອງເຮັດບົດສົນທະນາໃນເວລາທີ່ໄປ ສະຖາບັນເພື່ອການຊ່ວຍເຫຼືອແຮງງານຕ່າງປະເທດຄືດັ່ງຕົວຢ່າງ.

보기 ຕົວຢ່າງ



컴퓨터 교육을 받다
ຮັບການສຶກສາກ່ຽວກັບຄອມພິວເຕີ້

신청서를 쓰다
ຂຽນໃບສະໝັກ

가: 여기에서 컴퓨터 교육을 받을 수 있어요?
ສາມາດຮັບການສຶກສາກ່ຽວກັບ ຄອມພິວເຕີ ຢູ່ທີ່ນີ້ໄດ້ບໍ?

나: 네, 컴퓨터 교육을 받으려면 이 신청서를 쓰세요.
ເຈົ້າ, ຖ້າຕ້ອງການສຶກສາກ່ຽວກັບຄອມພິວເຕີ, ກະລຸນາຂຽນໃບສະໝັກນີ້.

1)



먼저 예약하다
ກ່ອນອື່ນ ແມ່ນຈອງກ່ອນ

상담을 받다
ຮັບຄຳປຶກສາ

2)




신청서를 쓰다
ຂຽນໃບສະໝັກ

행사에 참여하다
ເຂົ້າຮ່ວມງານ

3)






내일까지 신청하다
ສາມາດສະໝັກໄດ້ຮອດມື້ອື່ນ

문화 체험을 하다
ປະສົບການທາງວັດທະນະທຳ

4)



일요일에 오다
ມາໃນວັນອາທິດ

자원 봉사를 하다
ເຮັດອາສາສະໝັກ

정답

1) 가: 여기에서 상담을 받을 수 있어요?
   나: 네, 상담을 받으려면 먼저 예약하세요.

2) 가: 여기에서 행사에 참여할 수 있어요?
   나: 네, 행사에 참여하려면 먼저 신청서를 쓰세요.

3) 가: 여기에서 문화 체험을 할 수 있어요?
   나: 네, 문화 체험을 하려면 내일까지 신청하세요.

4) 가: 여기에서 자원 봉사를 할 수 있어요?
   나: 네, 자원 봉사를 하려면 일요일에 오세요.

# 외국인 근로자를 위한 지원 기관

ສະຖາບັນເພື່ອການຊ່ວຍເຫຼືອແຮງງານຕ່າງປະເທດ

## 외국인력상담센터 ສູນໃຫ້ຄຳປຶກສາແຮງງານຕ່າງປະເທດ

외국인력상담센터는 외국인근로자 및 사업주의 공공 지원을 위한 기관입니다. 다양한 외국어로 서비스되고 있어 한국어를 잘 모르는 근로자도 쉽게 도움을 받을 수 있습니다. 예약 상담은 전화 상담과 방문 상담으로 이루어지는데, 전화 상담은 홈페이지(www.hugkorea.or.kr) 게시판에 상담 내용과 전화번호, 예약 시간을 남기면 상담사가 전화를 합니다. 그리고 방문해서 상담을 받고 싶으면 미리 예약하는 것이 좋습니다.

ສູນໃຫ້ຄຳປຶກສາແຮງງານຕ່າງປະເທດແມ່ນ ສະຖາບັນທີ່ໃຫ້ການຊ່ວຍເຫຼືອແຮງງານຕ່າງປະເທດ ແລະ ຜູ້ຈ້າງແຮງງານຕ່າງປະເທດ. ເນື່ອງຈາກມີການບໍລິການໃນຫຼາກຫຼາຍພາສາຕ່າງປະເທດ ຈຶ່ງເຮັດໃຫ້ຜູ້ທີ່ບໍ່ຮູ້ຈັກພາສາເກົາຫຼີ ກໍສາມາດຮັບການຊ່ວຍເຫຼືອໄດ້ເຊັ່ນກັນ. ການບໍລິການການໃຫ້ຄຳປຶກສາແມ່ນມີທັງ ຜ່ານທາງໂທລະສັບ ແລະ ການພົບກັນຕົວຕໍ່ຕົວ. ສຳລັບ ການໃຫ້ຄຳປຶກສາທາງໂທລະສັບແມ່ນໃຫ້ເຂົ້າໄປ ໂຮມເພຈ (www.hugkorea.or.kr) ໂດຍສາມາດໃສ່ເນື້ອໃນສິ່ງທີ່ຈະປຶກສາ, ເບີໂທຕິດຕໍ່ ແລະ ເວລາທີ່ສະ ດວກໄວ້ທີ່ໜ້າກະດານຂອງເພຈ, ຫຼັງຈາກນັ້ນຜູ້ທີ່ຈະໃຫ້ຄຳປຶກສາຈະໂທກັບໄປ. ສ່ວນໃນກໍລະນີທີ່ຢາກໄດ້ ຮັບຄຳປຶກສາແບບຕົວຕໍ່ຕົວ ຄວນຈອງໄວ້ລ່ວງໜ້າ.




## 외국인력지원센터 현황 및 프로그램 소개

ການນຳສະເໜີກ່ຽວກັບສະພາບ ແລະ ໂປຼແກຼມ ຂອງສູນຊ່ວຍເຫຼືອແຮງງານຕ່າງປະເທດ

외국인력지원센터는 한국에서 생활하고 있는 외국인근로자를 돕기 위한 기관으로 한국어 교육, 컴퓨터 교육 등의 여러 가지 교육 뿐만 아니라 고충 상담, 생활 법률, 국가별 커뮤니티 행사나 다양한 문화 체험 행사 등을 기획하고 있습니다.

ໃນຖານະທີ່ເປັນໜ່ວຍງານ ເພື່ອການຊ່ວຍເຫຼືອແຮງງານຕ່າງປະເທດທີ່ອາໃສຢູ່ໃນໃນເກົາຫຼີ, ສະຖາບັນເພື່ອການຊ່ວຍເຫຼືອແຮງງານຕ່າງປະເທດບໍ່ພຽງແຕ່ມີການຈັດສັນ ການໃຫ້ການສຶກສາພາສາເກົາຫຼີ, ຄອມພິວເຕີ ແລະ ອື່ນໆ ເທົ່ານັ້ນ, ແຕ່ຍັງອຳນວຍ ຄວາມສະດວກໃນການໃຫ້ຕຳປຶກສາກ່ຽວກັບບັນຫາຕ່າງໆ, ການບໍລິການທາງກົດໝາຍ, ການຈັດງານສັງສັນສະມາຄົມຂອງແຕ່ລະປະເທດ, ການຈັດງານ ເພື່ອສົ່ງເສີມປະສົບການທາງວັດທະນະທຳ ແລະ ອື່ນໆ.

| 지역별 외국인력지원센터 | 홈페이지 주소 |
| --- | --- |
| 한국외국인력지원센터(서울) | www.migrantok.org |
| 의정부외국인력지원센터 | www.ufc.or.kr |
| 창원외국인력지원센터 | www.mfwc.or.kr |
| 김해외국인력지원센터 | www.gimhaekorea.or.kr |
| 대구외국인력지원센터 | www.dfwc.or.kr |
| 인천외국인력지원센터 | www.infc.or.kr |
| 천안외국인력지원센터 | www.cfwc.or.kr |



## EPS-TOPIK 듣기 ພາກຟັງ EPS-TOPIK



ຂໍ້ 1 ຫາ 3 ແມ່ນຄຳຖາມກ່ຽວກັບການຟັງຄຳຖາມ ແລ້ວເລືອເອົາຄຳຕອບທີ່ຖືກຕ້ອງ. ກະລຸນາກວດເບິ່ງເນື້ອໃນຄຳຖາມກ່ອນຟັງ.

[1~3] 질문을 듣고 알맞은 대답을 고르십시오.
ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.




1. ① 네, 신청서를 쓰세요.
   ② 아니요, 받을 수 있어요.
   ③ 네, 어제 태권도를 했어요.
   ④ 아니요, 예약을 하면 돼요.

2. ① 한국 문화를 배울게요.
   ② 먼저 신청을 해야 돼요.
   ③ 문화 체험을 하고 싶어요.
   ④ 한국 요리도 하고 박물관도 가요.

3. ① 상담을 받았어요.
   ② 영양 교육을 받고 싶어요.
   ③ 운동을 열심히 해야 돼요.
   ④ 외국인력지원센터에 전화해 보세요.



ຂໍ້ 4 ແລະ 5 ແມ່ນຄຳຖາມກ່ຽວກັບການຟັງບົດສົນທະນາບົດໜຶ່ງ ແລ້ວຕອບຄຳຖາມ 2 ຂໍ້. ກະລຸນາກວດເບິ່ງເນື້ອໃນຄຳຕອບ ແລະ ຄຳຖາມກ່ອນຟັງ.

[4~5] 하나의 이야기를 듣고 두 개의 질문에 대답하십시오.
ຈົ່ງຟັງບົດສົນທະນາໜຶ່ງບົດ ແລ້ວຕອບຄຳຖາມ 2 ຂໍ້.

4. 남자는 왜 외국인력지원센터에 갔습니까?
   ເປັນຫຍັງ ຜູ້ຊາຍ ຈຶ່ງໄປທີ່ສູນເພື່ອການຊ່ວຍເຫຼືອແຮງງານຕ່າງປະເທດ?
   ① 상담을 받고 싶어서 ② 자원 봉사를 하고 싶어서
   ③ 한국어를 배우고 싶어서 ④ 무료 진료를 받고 싶어서

5. 남자는 무엇을 해야 합니까?
   ຜູ້ຊາຍ ຕ້ອງເຮັດຫຍັງ?
   ① 돈을 내야 합니다. ② 사진을 찍어야 합니다.
   ③ 신청서를 써야 합니다. ④ 수업을 들어야 합니다.



### 듣기 대본 ເນື້ອໃນບົດຟັງ

1. 남: 여기에서 태권도 교육을 받을 수 있어요? ສາມາດຮັບການສຶກສາເທຄວັນໂດ້ຢູ່ນີ້ໄດ້ບໍ່?
2. 여: 거기에서 어떤 문화 체험을 할 수 있어요?
   ມີປະສົບການທາງວັດທະນະທຳໃດແດ່ ທີ່ສາມາດເຮັດໄດ້ຢູ່ທີ່ນັ້ນ?
3. 남: 무료 진료를 받으려면 어떻게 해야 돼요?
   ຖ້າຕ້ອງການຮັບການຮັກສາແບບບໍ່ເສຍຄ່າ ຕ້ອງເຮັດແນວໃດ?

4-5. 여: 어떻게 오셨어요? ມີຫຍັງໃຫ້ຊ່ວຍບໍ່?

남: 한국어 교육을 신청하려고 하는데 어떻게 해야 돼요?
ຂ້ອຍຕ້ອງການການລົງທະບຽນຮຽນພາສາເກົາຫຼີ, ຂ້ອຍຄວນເຮັດແນວໃດ?

여: 그럼 먼저 이 신청서를 쓰고 잠깐만 기다리세요. ສະນັ້ນ, ເລີ່ມຕົ້ນ ແມ່ນຂຽນໃບສະໝັກນີ້ ແລ້ວລໍຖ້າໜ້ອຍໜຶ່ງ.

정답 1. ① 2. ④ 3. ④ 4. ③ 5. ③

## 확장 연습 ບົດເຝິກຫັດເພີ່ມເຕີມ



L-30

**[1~2] 질문을 듣고 알맞은 대답을 고르십시오.** ຈົ່ງຟັງຄຳຖາມ ແລ້ວເລືອກເອົາຄຳຕອບທີ່ເໝາະສົມ.

1. ① 사무실에 있어요. ② 금요일까지예요.
   ③ 신청서가 많아요. ④ 2층에서 신청해요.

2. ① 그럼요, 컴퓨터 교육은 못해요. ② 아니요, 항상 수업을 하고 있어요.
   ③ 아니요, 컴퓨터 교육을 받고 있어요. ④ 그럼요, 상담을 받고 신청하면 돼요.

### 확장 연습 듣기 대본 ເນື້ອໃນບົດຟັງ ບົດເຝິກຫັດເພີ່ມເຕີມ

1. 남: 신청서는 어디에 있어요? ແບບຟອມສະໝັກຢູ່ໃສ?
2. 남: 외국인인력지원센터에서 컴퓨터 교육도 해요?
   ຢູ່ສູນເພື່ອການຊ່ວຍເຫຼືອແຮງງານຕ່າງດ້າວ ກໍມີການໃຫ້ການສຶກສາ ກ່ຽວກັບຄອມພິວເຕີບໍ່?

정답 1. ① 2. ④

## 발음 ການອອກສຽງ



P-14

**ຈົ່ງຕັ້ງໃຈຟັງໃຫ້ດີ ແລ້ວເວົ້າຕາມ.**

ໃນການອອກສຽງຂອງຕົວສະກົດໃນພາສາເກົາຫຼີມີພຽງພະຍັນຊະນະຕົວດຽວ ທີ່ສາມາດອອກສຽງໄດ້. ເຊັ່ນ: ('닭'이나 '값' ) ໄກ່ ຫຼື ລາຄາຕົວ ສະກົດທີ່ມີພະຍັນຊະນະ ສອງ ຕົວ ແຕ່ອອກສຽງໄດ້ພຽງຕົວດຽວຄື:
'닥 [tak], 갑[kap]'.

(1) 몫, 흙, 값, 읽다, 앉다
(2) 여덟, 넓다, 젊다, 삶다
(3) 값도 싸요.
(4) 닭도 있어요.



# EPS-TOPIK 읽기 ພາກອ່ານ EPS-TOPIK



ສຳລັບ 1 ຫາ 2 ແມ່ນຄຳຖາມກ່ຽວກັບການເບິ່ງຮູບພາບ ແລ້ວເລືອກເອົາສຳນວນທີ່ເໝາະສົມ. ຈົ່ງຄຶດທົບທວນຄຳສັບທີ່ຮຽນຜ່ານມາ ແລ້ວຕອບຄຳຖາມ.

[1~2] 다음 그림을 보고 맞는 문장을 고르십시오. ຈົ່ງເບິ່ງຮູບພາບຕໍ່ໄປນີ້ ແລ້ວເລືອກເອົາປະໂຫຍກທີ່ຖືກຕ້ອງ.

1.



① 휴게실에서 쉽니다. ② 컴퓨터를 배웁니다.
③ 친구하고 운동을 합니다. ④ 무료 진료를 받습니다.

2.




① 상담을 받습니다. ② 행사를 예약합니다.
③ 행사에 참여합니다. ④ 교육을 신청합니다.



ຂໍ້ 3 ຫາ 5 ແມ່ນຄຳຖາມກ່ຽວກັບການອ່ານໃບແຈ້ງການ ແລ້ວເລືອກເອົາຄຳຕອບທີ່ຖືກຕ້ອງ. ຈົ່ງອ່ານຂໍ້ມູນຢູ່ໃນແຈ້ງການໃຫ້ດີ.

[3~5] 다음 질문에 답하십시오. ຈົ່ງຕອບຄຳຖາມຕໍ່ໄປນີ້.

3. 다음 안내판의 설명으로 알맞지 않은 것을 고르십시오.
ຕໍ່ໄປ, ຈົ່ງເລືອກເອົາສິ່ງທີ່ບໍ່ກົງກັບຂໍ້ມູນ ທີ່ອະທິບາຍຢູ່ໃນແຈ້ງການ.

**안전교육**
ການສຶກສາກ່ຽວກັບຄວາມປອດໄພ

시간: 8월 6일(토) ເວລາ: ວັນທີ 6 ເດືອນ 8 (ວັນອາທິດ)
15:00~17:00 ເວລາ 15:00~17:00ໂມງ

장소: 한국외국인력지원센터 205호
ສະຖານທີ່: ສູນໃຫ້ການຊ່ວຍເຫຼືອແຮງງານຕ່າງປະເທດເກົາຫຼີ, ຫ້ອງເບີ 205

① 교육은 토요일에 있습니다.
② 세 시간 동안 교육을 합니다.
③ 안전에 대해 배울 수 있습니다.
④ 교육을 하는 곳은 205호입니다.

4. 베트남 사람은 법률 교육을 받으러 언제, 어디로 가야 합니까?
ສຳລັບຄົນຫວຽດນາມ, ຖ້າຕ້ອງການຮັບການສຶກສາກ່ຽວກັບກົດໝາຍ ແມ່ນຕ້ອງໄປໃສ ແລະ ເມື່ອໃດ?

| 법률 교육 ການສຶກສາກ່ຽວກັບກົດໝາຍ | | |
|---|---|---|
| 일시 ຊົ່ວຄາວ | 장소 ສະຖານທີ່ | 대상 ກຸ່ມເປົ້າໝາຍ |
| 8월 23일 16:00<br>ວັນທີ 23 ເດືອນ 8 ເວລາ 16:00 ໂມງ | 303호<br>ຫ້ອງ 303 | 몽골<br>ມົງໂກນ |
| 8월 23일 16:00<br>ວັນທີ 23 ເດືອນ 8 ເວລາ 16:00 ໂມງ | 304호<br>ຫ້ອງ 304 | 베트남<br>ຫວຽດນາມ |
| 8월 30일 11:00<br>ວັນທີ 30 ເດືອນ 8 ເວລາ 11:00 ໂມງ | 501호<br>ຫ້ອງ 501 | 방글라데시<br>ບັງກະລາເທດ |

① 8월 23일 오후 4시, 303호
② 8월 23일 오후 4시, 304호
③ 8월 30일 오후 4시, 304호
④ 8월 30일 오전 11시, 501호



5. 이 광고에 대한 설명으로 알맞지 않은 것을 고르십시오.
ຈົ່ງເລືອກເອົາສິ່ງທີ່ບໍ່ສອດຄ່ອງກັບ ການອະທິບາຍກ່ຽວກັບການປະກາດນີ້.

**한국외국인력지원센터 이용 안내**
ຂໍ້ມູນການນຳໃຊ້ ສູນເພື່ອການຊ່ວຍເຫຼືອແຮງງານຕ່າງປະເທດເກົາຫຼີ

* 한국 요리 교실 ຫ້ອງຮຽນປຸງແຕ່ງອາຫານເກົາຫຼີ
  시간: 매주 화요일 오전 11시 ເວລາ: ທຸກໆວັນ ອັງຄານ, ຕອນເຊົ້າ 11 ໂມງ
  장소: 205호 ສະຖານທີ່: ຫ້ອງ 205
* 무료 진료 ການປິ່ນປົວຟຣີ
  시간: 매월 둘째 일요일 오후 2시 ເວລາ: ທຸກໆວັນອາທິດທີສອງຂອງເດືອນ, ເວລາບ່າຍ 2 ໂມງ
  장소: 회의실 ສະຖານທີ່: ຫ້ອງປະຊຸມ
  진료 과목: 내과, 치과, 한방진료
  ຂອບເຂດການປິ່ນປົວ: ກວດພາຍໃນ, ປົວແຂ້ວ, ການປົວແຜນພື້ນເມືອງ

① 진료를 받고 돈을 내야 합니다.
② 요리를 배우려면 11시까지 가야 합니다.
③ 매주 일요일에 치료를 받을 수 있습니다.
④ 매주 화요일에 한국 요리를 배울 수 있습니다.

정답 1. ② 2. ③ 3. ② 4. ② 5. ①

## 확장 연습 ບົດເຝິກຫັດເພີ່ມເຕີມ

[1~2] 빈칸에 들어갈 가장 알맞은 것을 고르십시오. ຈົ່ງເລືອກເອົາຄຳຕອບ ທີ່ເໝາະສົມທີ່ສຸດ ຕື່ມໃສ່ບ່ອນຫວ່າງ.

1.

외국인력지원센터는 외국인 근로자를 위한 기관입니다. 방문해서 상담을 ___________ 미리 예약을 해야 합니다.
ສູນເພື່ອການຊ່ວຍເຫຼືອແຮງງານຕ່າງປະເທດແມ່ນ ອົງການເພື່ອການຊ່ວຍເຫຼືອແຮງງານຕ່າງປະເທດ. ຖ້າຈະໄປຢ້ຽມຢາມເພື່ອຮັບຄຳປຶກສາ, ຕ້ອງຈອງໄວ້ລ່ວງໜ້າ.

① 받으려면
② 받고 나서
③ 사용하려면
④ 사용하고 나서

2.

수루 씨는 조리사 자격증을 따고 싶습니다. 그래서 외국인력지원센터에서 하는 조리사 교육 과정을 _________.
ຊຸຣູ ຢາກໄດ້ໃບຢັ້ງຢືນການເປັນພໍ່ຄົວ. ສະນັ້ນ ລາວຈຶ່ງໄດ້ສະໝັກຫຼັກສູດ ການສຶກສາກ່ຽວກັບການເປັນພໍ່ຄົວຢູ່ສູນເພື່ອການຊ່ວຍເຫຼືອແຮງງານຕ່າງດ້າວ.

① 교환했습니다
② 복습했습니다
③ 신청했습니다
④ 정돈했습니다

정답 1. ① 2. ③

## ㄱ

## ㄹ



## ㅁ



## ㅂ





## ㅅ



## ㅈ





## ㅎ

## 1. '—' 탈락 ຄຳຄຸນນາມອະປົກກະຕິ ທີ່ລົງທ້າຍດ້ວຍ '—'

| | 번역 ແປ | -ㅂ/습니다 | -아/어요 | -았/었어요 | -고 | -(으)니까 |
|---|---|---|---|---|---|---|
| **아프다** | ເຈັບ, ປວຍ, ໄຂ້ | 아픕니다 | 아파요 | 아팠어요 | 아프고 | 아프니까 |
| **예쁘다** | ງາມ, ສວຍງາມ | 예쁩니다 | 예뻐요 | 예뻤어요 | 예쁘고 | 예쁘니까 |
| **바쁘다** | ຄາວຽກ | 바쁩니다 | 바빠요 | 바빴어요 | 바쁘고 | 바쁘니까 |
| **슬프다** | ໂສກເສົ້າ | 슬픕니다 | 슬퍼요 | 슬펐어요 | 슬프고 | 슬프니까 |
| **고프다** | ຫິວເຂົ້າ | 고픕니다 | 고파요 | 고팠어요 | 고프고 | 고프니까 |
| **크다** | ໃຫຍ່ | 큽니다 | 커요 | 컸어요 | 크고 | 크니까 |
| **쓰다** | ຂົມ | 씁니다 | 써요 | 썼어요 | 쓰고 | 쓰니까 |
| **나쁘다** | ບໍ່ດີ, ຊົ່ວ | 나쁩니다 | 나빠요 | 나빴어요 | 나쁘고 | 나쁘니까 |
| **기쁘다** | ມີຄວາມສຸກ | 기쁩니다 | 기뻐요 | 기뻤어요 | 기쁘고 | 기쁘니까 |
| **잠그다** | ອັດ, ລ່ອກ | 잠급니다 | 잠가요 | 잠갔어요 | 잠그고 | 잠그니까 |
| **쓰다** | ຂຽນ/ ນຸ່ງ, ໃສ່ (ໝວກ) / ໃຊ້ | 씁니다 | 써요 | 썼어요 | 쓰고 | 쓰니까 |
| **끄다** | ປິດ | 끕니다 | 꺼요 | 껐어요 | 끄고 | 끄니까 |



## 2. 'ㄹ' 탈락 ຄຳຄຸນນາມອະປົກກະຕິ ທີ່ລົງທ້າຍດ້ວຍ'ㄹ'

| | 번역 ແປ | -ㅂ/습니다 | -아/어요 | -고 | -(으)니까 | -(으)세요 |
|---|---|---|---|---|---|---|
| **살다** | ດຳລົງຊີວິດ, ອາໄສ | 삽니다 | 살아요 | 살고 | 사니까 | 사세요 |
| **팔다** | ຂາຍ | 팝니다 | 팔아요 | 팔고 | 파니까 | 파세요 |
| **만들다** | ສ້າງ, ເຮັດ | 만듭니다 | 만들어요 | 만들고 | 만드니까 | 만드세요 |
| **열다** | ເປີດ | 엽니다 | 열어요 | 열고 | 여니까 | 여세요 |
| **놀다** | ຫຼິ້ນ | 놉니다 | 놀아요 | 놀고 | 노니까 | 노세요 |
| **알다** | ຮູ້, ຮັບຮູ້ | 압니다 | 알아요 | 알고 | 아니까 | 아세요 |
| **울다** | ໄຫ້ | 웁니다 | 울어요 | 울고 | 우니까 | 우세요 |
| **걸다** | ແຂວນ | 겁니다 | 걸어요 | 걸고 | 거니까 | 거세요 |
| **졸다** | ເຫງົານອນ | 좁니다 | 졸아요 | 졸고 | 조니까 | 조세요 |
| **쓸다** | ແກວ່ງ | 씁니다 | 쓸어요 | 쓸고 | 쓰니까 | 쓰세요 |
| **풀다** | ປ່ອຍ, ແກ້ອອກ | 풉니다 | 풀어요 | 풀고 | 푸니까 | 푸세요 |
| **널다** | ຕາກເຄື່ອງ | 넙니다 | 널어요 | 널고 | 너니까 | 너세요 |
| **길다** | ຍາວ | 깁니다 | 길어요 | 길고 | 기니까 | |
| **멀다** | ໄກ | 멉니다 | 멀어요 | 멀고 | 머니까 | |
| **달다** | ຫວານ | 답니다 | 달아요 | 달고 | 다니까 | |

## 3. 'ㅂ' 불규칙 ຄຳຄຸນນາມອະປົກກະຕິ ທີ່ລົງທ້າຍດ້ວຍ'ㅂ'

| | 번역 ແປ | -ㅂ/습니다 | -아/어요 | -고 | -(으)면 | -(으)ㄹ 거예요 |
|---|---|---|---|---|---|---|
| **덥다** | ຮ້ອນ (ອາກາດ) | 덥습니다 | 더워요 | 덥고 | 더우면 | 더울 거예요 |
| **춥다** | ໜາວ | 춥습니다 | 추워요 | 춥고 | 추우면 | 추울 거예요 |
| **쉽다** | ງ່າຍ | 쉽습니다 | 쉬워요 | 쉽고 | 쉬우면 | 쉬울 거예요 |
| **어렵다** | ຍາກ | 어렵습니다 | 어려워요 | 어렵고 | 어려우면 | 어려울 거예요 |
| **맵다** | ເຜັດ | 맵습니다 | 매워요 | 맵고 | 매우면 | 매울 거예요 |
| **싱겁다** | ຈືດ, ບໍ່ມີລົດຊາດ | 싱겁습니다 | 싱거워요 | 싱겁고 | 싱거우면 | 싱거울 거예요 |
| **가볍다** | ເບົາ | 가볍습니다 | 가벼워요 | 가볍고 | 가벼우면 | 가벼울 거예요 |
| **무겁다** | ໜັກ | 무겁습니다 | 무거워요 | 무겁고 | 무거우면 | 무거울 거예요 |
| **뜨겁다** | ຮ້ອນ (ຄວາມຮ້ອນ, ນ້ຳຮ້ອນ) | 뜨겁습니다 | 뜨거워요 | 뜨겁고 | 뜨거우면 | 뜨거울 거예요 |
| **차갑다** | ໜາວ | 차갑습니다 | 차가워요 | 차갑고 | 차가우면 | 차가울 거예요 |
| **더럽다** | ເປື້ອນ, ເປິເປື້ອນ | 더럽습니다 | 더러워요 | 더럽고 | 더러우면 | 더러울 거예요 |
| **어지럽다** | ວິນ, ວິນວຽນ | 어지럽습니다 | 어지러워요 | 어지럽고 | 어지러우면 | 어지러울 거예요 |
| **시끄럽다** | ນັ່ນ, ເນື່ອງນັ່ນ | 시끄럽습니다 | 시끄러워요 | 시끄럽고 | 시끄러우면 | 시끄러울 거예요 |
| **외롭다** | ໂດດດ່ຽວ | 외롭습니다 | 외로워요 | 외롭고 | 외로우면 | 외로울 거예요 |
| **고맙다** | ຂອບໃຈ | 고맙습니다 | 고마워요 | 고맙고 | 고마우면 | 고마울 거예요 |
| **가깝다** | ໃກ້ | 가깝습니다 | 가까워요 | 가깝고 | 가까우면 | 가까울 거예요 |
| **즐겁다** | ມີຄວາມສຸກ, ມ່ວນ | 즐겁습니다 | 즐거워요 | 즐겁고 | 즐거우면 | 즐거울 거예요 |
| **무섭다** | ຕາຢ້ານ | 무섭습니다 | 무서워요 | 무섭고 | 무서우면 | 무서울 거예요 |
| **아름답다** | ງາມ | 아름답습니다 | 아름다워요 | 아름답고 | 아름다우면 | 아름다울 거예요 |
| **그립다** | ຄິດຮອດ | 그립습니다 | 그리워요 | 그립고 | 그리우면 | 그리울 거예요 |
| **굽다** | ປີ້ງ | 굽습니다 | 구워요 | 굽고 | 구우면 | 구울 거예요 |
| **줍다** | ເກັບ, ເດັດ | 줍습니다 | 주워요 | 줍고 | 주우면 | 주울 거예요 |
| **돕다** | ຊ່ວຍເຫຼືອ | 돕습니다 | 도와요 | 돕고 | 도우면 | 도울 거예요 |
| **입다** | ນຸ່ງ, ໃສ່ | 입습니다 | 입어요 | 입고 | 입으면 | 입을 거예요 |
| **좁다** | ແຄບ | 좁습니다 | 좁아요 | 좁고 | 좁으면 | 좁을 거예요 |



## 4. ‘ㄷ’ 불규칙 ຄຳສັບອະປົກກະຕິ ທີ່ລົງທ້າຍດ້ວຍ ‘ㄷ’

| | 번역 ແປ | -ㅂ/습니다 | -아/어요 | -고 | -(으)니까 | -(으)ㄹ 거예요 |
|---|---|---|---|---|---|---|
| **걷다** | ຍ່າງ | 걷습니다 | 걸어요 | 걷고 | 걸으니까 | 걸을 거예요 |
| **듣다** | ຟັງ | 듣습니다 | 들어요 | 듣고 | 들으니까 | 들을 거예요 |
| **묻다** | ຖາມ | 묻습니다 | 물어요 | 묻고 | 물으니까 | 물을 거예요 |
| **싣다** | ບັນຈຸ | 싣습니다 | 실어요 | 싣고 | 실으니까 | 실을 거예요 |
| **깨닫다** | ຮັບຮູ້ | 깨닫습니다 | 깨달아요 | 깨닫고 | 깨달으니까 | 깨달을 거예요 |
| **닫다** | ປິດ | 닫습니다 | 닫아요 | 닫고 | 닫으니까 | 닫을 거예요 |
| **받다** | ເອົາ, ຈັບເອົາ | 받습니다 | 받아요 | 받고 | 받으니까 | 받을 거예요 |
| **믿다** | ເຊື່ອ | 믿습니다 | 믿어요 | 믿고 | 믿으니까 | 믿을 거예요 |
| **묻다** | ຝັງ | 묻습니다 | 묻어요 | 묻고 | 묻으니까 | 묻을 거예요 |

## 5. 'ㄹ' 불규칙 ຄຳຄຸນນາມອະປົກກະຕິ ທີ່ລົງທ້າຍດ້ວຍ 'ㄹ'

| | 번역 ແປ | -ㅂ/습니다 | -아/어요 | -고 | -(으)니까 | -(으)ㄹ 거예요 |
|---|---|---|---|---|---|---|
| **빠르다** | ໄວ | 빠릅니다 | 빨라요 | 빠르고 | 빠르니까 | 빠를 거예요 |
| **누르다** | ກົດ | 누릅니다 | 눌러요 | 누르고 | 누르니까 | 누를 거예요 |
| **부르다** | ເອີ້ນ, ຮຽກ | 부릅니다 | 불러요 | 부르고 | 부르니까 | 부를 거예요 |
| **오르다** | ຂຶ້ນ | 오릅니다 | 올라요 | 오르고 | 오르니까 | 오를 거예요 |
| **자르다** | ຕັດ | 자릅니다 | 잘라요 | 자르고 | 자르니까 | 자를 거예요 |
| **서투르다** | ຫຍຸ້ງ, ບ້າ | 서투릅니다 | 서툴러요 | 서투르고 | 서투르니까 | 서투를 거예요 |
| **다르다** | ແຕກຕ່າງ | 다릅니다 | 달라요 | 다르고 | 다르니까 | 다를 거예요 |
| **마르다** | ແຫ້ງ, ຫິວນ້ຳ, ຫຼຸດນ້ຳໜັກ | 마릅니다 | 말라요 | 마르고 | 마르니까 | 마를 거예요 |
| **들르다** | ແວພັກ, ແວ | 들릅니다 | 들러요 | 들르고 | 들르니까 | 들를 거예요 |
| **모르다** | ບໍ່ຮູ້ | 모릅니다 | 몰라요 | 모르고 | 모르니까 | 모를 거예요 |
| **고르다** | ເລືອກ | 고릅니다 | 골라요 | 고르고 | 고르니까 | 고를 거예요 |
| **나르다** | ຫິ້ວ | 나릅니다 | 날라요 | 나르고 | 나르니까 | 나를 거예요 |



## 6. 'ㅅ' 불규칙 ຄຳຄຸນນາມອະປົກກະຕິ ທີ່ລົງທ້າຍດ້ວຍ 'ㅅ'

| | 번역 ແປ | -ㅂ/습니다 | -아/어요 | -고 | -(으)니까 | -(으)ㄹ 거예요 |
|---|---|---|---|---|---|---|
| **낫다** | ຟື້ນຟູ | 낫습니다 | 나아요 | 낫고 | 나으니까 | 나을 거예요 |
| **짓다** | ສ້າງ, ກໍ່ສ້າງ | 짓습니다 | 지어요 | 짓고 | 지으니까 | 지을 거예요 |
| **붓다** | ກົ່ນ | 붓습니다 | 부어요 | 붓고 | 부으니까 | 부을 거예요 |
| **잇다** | ເຊື່ອມຕໍ່, ຕໍ່ | 잇습니다 | 이어요 | 잇고 | 이으니까 | 이을 거예요 |
| **씻다** | ລ້າງ | 씻습니다 | 씻어요 | 씻고 | 씻으니까 | 씻을 거예요 |
| **벗다** | ແກ້ອອກ | 벗습니다 | 벗어요 | 벗고 | 벗으니까 | 벗을 거예요 |
| **빗다** | ຫວີ | 빗습니다 | 빗어요 | 빗고 | 빗으니까 | 빗을 거예요 |

## 7. 'ㅎ' 불규칙 'ㅎ' ຄຳກຳມະ ອະປົກກະຕິ

| | 번역 ແປ | -ㅂ/습니다 | -아/어요 | -고 | -(으)니까 | -(으)ㄹ 거예요 |
|---|---|---|---|---|---|---|
| **파랗다** | ສີຟ້າ | 파랗습니다 | 파래요 | 파랗고 | 파라니까 | 파랄 거예요 |
| **하얗다** | ສີຂາວ | 하얗습니다 | 하얘요 | 하얗고 | 하야니까 | 하얄 거예요 |
| **빨갛다** | ສີແດງ | 빨갛습니다 | 빨개요 | 빨갛고 | 빨가니까 | 빨갈 거예요 |
| **노랗다** | ສີແດງ | 노랗습니다 | 노래요 | 노랗고 | 노라니까 | 노랄 거예요 |
| **까맣다** | ສີດຳ | 까맣습니다 | 까매요 | 까맣고 | 까마니까 | 까말 거예요 |
| **그렇다** | ຄືແນວນັ້ນ | 그렇습니다 | 그래요 | 그렇고 | 그러니까 | 그럴 거예요 |
| **어떻다** | ແນວໃດ | 어떻습니까? | 어때요? | 어떻고 | | |
| **좋다** | ດີ | 좋습니다 | 좋아요 | 좋고 | 좋으니까 | 좋을 거예요 |
| **놓다** | ໃສ່, ເອົາໃສ່ | 놓습니다 | 놓아요 | 놓고 | 놓으니까 | 놓을 거예요 |

**집필** ຂຽນໂດຍ

김선정 KIM Seon Jung 계명대학교 Keimyung University
김성수 KIM Sung Su 계명대학교 Keimyung University
강진숙 KANG Chin Suk 계명대학교 Keimyung University

**번역** ແປໂດຍ

| | | |
|---|---|---|
| ໂພທອງ ໄຊທິບວົງສາ | Phothong SAITHIBVONGSA | NAPPA, Laos |
| ເພັດນາລອນ ອິນທະວົງ | Phetnalone INTHAVONG | National University of Laos |
| ສົມສະນິດ ສຸວັດມຸງຄຸນ | Somsanith SUVATMOUNGKHOUN | Souphanouvong University |
| ເມັດຄຳ ອັກຄະລາດ | Metkham AKHALATH | Pusan National University |
| ຈັນສະໝອນ ຈັນທະວົງ | Chansamone CHANTHAVONG | National University of Laos |

**감수** ກວດແກ້ໂດຍ

| | | |
|---|---|---|
| ໄຊຍະສານ ສຸຄັນທະຄະຕີ | Sayasane SOUKHANTHAKHATY | National University of Laos |
| ໄຂ່ຄຳ ສີສົມພູ | Khaikham SISOMPHOU | National University of Laos |

**라오어 녹음** ອັດສຽງພາສາລາວໂດຍ

| | | |
|---|---|---|
| ເພັດນາລອນ ອິນທະວົງ | Phetnalone INTHAVONG | National University of Laos |

**보조 집필** ຊ່ວຍໃນການຂຽນໂດຍ

안계은 AHN Kye Eun 계명대학교 Keimyung University

ປຶ້ມຕຳລາຮຽນດ້ວຍຕົນເອງ




라오스인을 위한

# 한국어 1

## ພາສາເກົາຫຼີ 1

| | |
|---|---|
| ຈັດພິມໃນວັນທີ | 08 ພຶດສະພາ 2019 |
| ສະຫງວນລິຂະສິດໂດຍ | HRD Korea |
| ຈັດພິມໂດຍ | HRD Korea |
| ທີ່ຢູ່ | 345 Jongga-ro, Jung-gu, 44538 Ulsan, Republic of Korea |
| ກວດແກ້ ແລະ ອອກແບບໂດຍ | Design maru |

